# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໓

# ພຣະວິໄນ

## ເຫຼັ້ມທີ ໓

# ພິກຂຸນີວິພັງ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮີບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບມ ໔ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ๗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກ່ຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ๗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໔ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

**໔. ປາຈິດຕິຍະກັນ** 

# ພຣະໄຕຣປິດົກ

## ເຫຼັ້ມທີ ៣

# ພຣະວິໄນ

## ເຫຼັ້ມທີ ៣

# ພິກຂຸນີວິພັງ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

# ໑. ປາຣາຊິກກັນ

## ປາຣາຊິກສິກຂາບົດທີ ໑

### ວ່າດ້ວຍການຍິນດີການຈັບຕ້ອງກາຍບໍລິເວນເໜືອເຂົ່າຂຶ້ນໄປຂອງຊາຍ

### ເລື່ອງພິກຂຸນີສຸນທະຣີນັນທາ

[៣໕៣] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະປິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ້າວສາລະທະຫຼານຂອງນາງວິສາຂາມິຄາຣະມານດາປະສົງຈະສ້າງວິຫານຖວາຍພິກຂຸນີສົງ ທ້າວສາລະທະຫຼານຂອງນາງວິສາຂາມິຄາຣະມານດາຈຶ່ງເຂົ້າໄປແຈ້ງຄວາມປະສົງແກ່ພິກຂຸນີວ່າ “ຂ້ານ້ອຍຕ້ອງການຈະສ້າງວິຫານຖວາຍພິກຂຸນີສົງ ທ່ານທັງຫຼາຍໂຜດໃຫ້ພິກຂຸນີຜູ້ເບິ່ງແຍງການກໍ່ສ້າງຈັກ ໑ ອົງແກ່ຂ້ານ້ອຍດ້ວຍເທີ້ນ”

ສະໄໝນັ້ນ ມີຍິງສາວ ៤ ຄົນພີ່ນ້ອງບວດຢູ່ໃນສຳນັກພິກຂຸນີ ຄື ນັນທາ ນັນທະວະດີ ສຸນທະຣີນັນທາ ຖຸນລະນັນທາ ໃນຈຳນວນ ៤ ອົງນີ້ ພິກຂຸນີສຸນທະຣີນັນທາບວດຕັ້ງແຕ່ເປັນສາວ ມີຮູບງາມໜ້າເບິ່ງ ໜ້າຊົມ ເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ດຸໝັ່ນ ບໍ່ຂີ້ຄ້ານ

ປະກອບດ້ວຍປັນຍາໄຕ່ຕອງໃນງານນັ້ນ ໆ ສາມາດເຮັດ ສາມາດຈັດແຈ່ງໄດ້ ພິກຂຸນີສົງຈຶ່ງແຕ່ງຕັ້ງພິກຂຸນີສຸນທະຣີນັນທາ ໃຫ້ເປັນຜູ້ເບິ່ງແຍງການກໍ່ສ້າງຂອງທ້າວສາລະຫະ ຫຼານຂອງນາງວິສາຂາມິຄາຣະມານດາ

ຄັ້ງນັ້ນ ພິກຂຸນີສຸນທະຣີນັນທານັ້ນ ໄດ້ໄປເຮືອນທ້າວສາລະຫະຫຼານຂອງນາງວິສາຂາມິຄາຣະມານດາຢູ່ເນືອງ ໆ ບອກວ່າ "ທ່ານຈົ່ງໃຫ້ມີດ ຈົ່ງໃຫ້ຂວານ ຈົ່ງໃຫ້ສຽມ ຈົ່ງໃຫ້ຈົກ ຈົ່ງໃຫ້ສິ່ວ" ຝ່າຍ ທ້າວສາລະຫະຫຼານຂອງນາງວິສາຂາມິຄາຣະມານດາກໍໝັ່ນໄປສູ່ສຳນັກພິກຂຸນີຢູ່ເນືອງ ໆ ເພື່ອໃຫ້ ຮູ້ງານທີ່ເຮັດແລ້ວ ແລະ ຍັງບໍ່ໄດ້ເຮັດ ຄົນທັງສອງນັ້ນມີຈິດຮັກແພງຕໍ່ກັນຍ້ອນພົບເຫັນກັນຢູ່ເນືອງ ໆ

ທ້າວສາລະຫະຫຼານຂອງນາງວິສາຂາມິຄາຣະມານດາ ເມື່ອບໍ່ໄດ້ໂອກາດທີ່ຈະເຮັດອະນາຈານ ພິກຂຸນີສຸນທະຣີນັນທາ ຈຶ່ງໄດ້ຈັດກຽມພັດຕາຫານສຳລັບຖວາຍພິກຂຸນີສົງ ເພື່ອຫາທາງທີ່ຈະປະທຸດສະຮ້າຍນາງ ເມື່ອຈະປູອາສະນະໃນໂຮງສັນ ປູອາສະນະໄວ້ໃນສ່ວນຂ້າງໜຶ່ງດ້ວຍຄິດວ່າ "ພິກຂຸນີຈຳນວນເທົ່ານີ້ມີພັນສາແກ່ກວ່າພິຂຸນີສຸນທະຣີນັນທາ" ປູອາສະນະໄວ້ໃນສ່ວນຂ້າງໜຶ່ງດ້ວຍຄິດວ່າ "ພິກຂຸນີຈຳນວນເທົ່ານີ້ມີພັນສາອ່ອນກວ່າ" ປູອາສະນະໄວ້ສຳລັບພິກຂຸນີສຸນທະຣີນັນທາໃນສ່ວນຂ້າງໜຶ່ງ ໃນທີ່ມິດຊິດ ມີທີ່ກຳບັງ ເພື່ອໃຫ້ພິກຂຸນີຜູ້ເປັນເຖຣະເຂົ້າໃຈວ່າ "ພິກຂຸນີສຸນທະຣີນັນທານັ່ງຢູ່ກັບພວກພິກຂຸນີນະວະກະ" ແມ່ນພິກຂຸນີນະວະກະກໍຈະເຂົ້າໃຈໄປວ່າ "ພິກຂຸນີສຸນທະຣີນັນທານັ່ງຢູ່ກັບພວກພິກຂຸນີຜູ້ເປັນເຖຣະ" ເມື່ອແລ້ວທ້າວສາຫະຫຼານຂອງນາງວິສາຂາມິຄາຣະມານດາ ຈຶ່ງໃຫ້ຄົນໄປຮຽນພິກຂຸນີສົງວ່າ "ແມ່ເຈົ້າ ໄດ້ເວລາແລ້ວພັດຕາຫານສຳເລັດແລ້ວ"

ພິກຂຸນີສຸນທະຣີນັນທາສັງເກດຮູ້ວ່າ "ທ້າວສາລະຫະຫຼານຂອງນາງວິສາຂາມິຄາຣະມານດາ ກຽມການໄວ້ຫຼາຍ ບໍ່ແມ່ນພຽງຈັດພັດຕາຫານຖວາຍພິກຂຸນີສົງເທົ່ານັ້ນ ແຕ່ປະສົງທີ່ຈະເຮັດອະນາຈານເຮົາ ຖ້າເຮົາໄປກໍຕ້ອງມີເລື້ອງບໍ່ດີເກີດຂຶ້ນແນ່ນອນ" ຈຶ່ງສັ່ງພິກຂຸນີອັນເຕວາສິນີໄປວ່າ "ທ່ານຈົ່ງໄປນຳບິນທະບາດມາໃຫ້ເຮົາ ຖ້າມີຜູ້ຖາມເຖິງເຮົາ ຈົ່ງຕອບວ່າເຮົາເປັນໄຂ້" ພິກຂຸນີນັ້ນຈຶ່ງປະຕິບັດຕາມຄຳສັ່ງຂອງພິກຂຸນີສຸນທະຣີນັນທາ

ເວລານັ້ນ ທ້າວສາລະຫະຫຼານຂອງນາງວິສາຂາມິຄາຣະມານດາຢືນຖ້າຢູ່ຊຸ້ມປະຕູດ້ານນອກ ຖາມເຖິງພິກຂຸນີສຸນທະຣີນັນທາວ່າ "ແມ່ເຈົ້າສຸນທະຣີນັນທາໄປໄສນໍ ຂ້ານ້ອຍ ແມ່ເຈົ້າສຸນະທີນັນທາໄປໄສນໍ? ຂ້ານ້ອຍ" ເມື່ອທ້າວສາລະຫະຫຼານຂອງນາງວິສາຂາມິຄາຣະມານດາກ່າວຢ່າງນັ້ນ ພິກຂຸນີອັນເຕວາສິນີຂອງພິກຂຸນີສຸນທະຣີນັນທາ ໄດ້ກ່າວກັບທ້າວສາລະຫະຫຼານຂອງນາງວິສາຂາມິຄາຣະມານດາດັ່ງນີ້ວ່າ "ທ່ານ ພິກຂຸນີສຸນທະຣີນັນທາເປັນໄຂ້ ເຮົາຈັກຮັບບິນທະບາດໄປຖວາຍ"

ລຳດັບນັ້ນ ທ້າວສາລະທະຫຼານຂອງນາງວິສາຂາມິຄາຣະມານດາຄິດວ່າ "ການທີ່ເຮົາກຽມອາຫານຖວາຍພິກຂຸນີສົງ ກໍຍ້ອນແມ່ເຈົ້າສຸນທະຣີນັນທາ" ຈຶ່ງສັ່ງໃຫ້ລ້ຽງດູພິກຂຸນີສົງແລ້ວເຂົ້າໄປສູ່ສຳນັກພິກຂຸນີ

ສະໄໝນັ້ນແລ ພິກຂຸນີສຸນທະຣີນັນທາຢືນຖ້າທ້າວສາລະທະຫຼານຂອງນາງວິສາຂາມິຄານມານດາຢູ່ນອກຊຸ້ມປະຕູວັດ ພໍເຫັນເຂົາຍ່າງມາແຕ່ໄກຈຶ່ງຫຼີບເຂົ້າທີ່ຢູ່ນອນປົກຫົວຢູ່ເທິງຕຽງ

ລຳດັບນັ້ນ ທ້າວສາທະເຂົ້າໄປຫາພິກຂຸນີສຸນທະຣີນັນທາເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ຖາມພິກຂຸນີສຸນທະຣີນັນທາດັ່ງນີ້ວ່າ "ທ່ານບໍ່ສະບາຍບໍ? ເປັນຫຍັງຈຶ່ງນອນຢູ່ແນວນີ້"

ພິກຂຸນີສຸນທະຣີນັນທາກ່າວວ່າ "ທ້າວ ສະຕີຜູ້ປາຖະໜາຄົນທີ່ບໍ່ປາຖະໜາຕອບ ກໍມີອາການເປັນເຊັ່ນນີ້"

ເຂົາກ່າວຕອບວ່າ "ແມ່ເຈົ້າ ເປັນຫຍັງ ຂ້າພະເຈົ້າຈະບໍ່ປາຖະໜາທ່ານ ແຕ່ຫາໂອກາດທີ່ຈະຢູ່ນຳທ່ານສອງຕໍ່ສອງບໍ່ໄດ້" ເຂົາມີຄວາມກຳໜັດ ຈັບຕ້ອງກາຍພິກຂຸນີສຸນທະຣີນັນທາເຊິ່ງມີຄວາມກຳໜັດເຊັ່ນກັນ

ເວລານັ້ນ ພິກຂຸນີຊະຣາມີຕີນເຈັບອົງໜຶ່ງນອນຢູ່ບໍ່ໄກຈາກທີ່ຂອງນາງພິກຂຸນີສຸນທະຣີນັນທາໄດ້ເຫັນທ້າວສາລະທະຫຼານຂອງນາງວິສາຂາມິຄາຣະມານດາ ຜູ້ກຳໜັດກຳລັງຈັບຕ້ອງກາຍພິກຂຸນີສຸນທະຣີນັນທາຜູ້ກຳໜັດ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າສຸນທະຣີນັນທາຜູ້ກຳໜັດຈຶ່ງຍິນດີການຈັບຕ້ອງກາຍກັບຊາຍຜູ້ກຳໜັດແນວນີ້ນໍ?" ຈຶ່ງໄດ້ບອກເລື້ອງນັ້ນແກ່ພິກຂຸນີທັງຫຼາຍ ບັນດາພິກຂຸນີຜູ້ມັກໜ້ອຍ ສັນໂດດ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າສຸນທະຣີນັນທາ ຜູ້ກຳໜັດຈຶ່ງຍິນດີການຈັບຕ້ອງກາຍກັບຊາຍຜູ້ກຳໜັດນໍ?" ຈາກນັ້ນ ພິກຂຸນີເຫຼົ່ານັ້ນຈຶ່ງນຳເລື້ອງນີ້ໄປບອກພິກຂຸທັງຫຼາຍ ພວກພິກຂຸຜູ້ມັກໜ້ອຍ ສັນໂດດ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ກໍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າສຸນທະຣີນັນທາຜູ້ກຳໜັດຈຶ່ງຍິນດີການຈັບຕ້ອງກາຍກັບຊາຍຜູ້ກຳໜັດນໍ" ເມື່ອພິກຂຸເຫຼົ່ານັ້ນຕຳໜິ ພິກຂຸນີສຸນທະຣີນັນທາໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີສຸນທະຣີນັນທາກຳໜັດ ຍິນດີການຈັບຕ້ອງກາຍກັບຊາຍຜູ້ກຳໜັດແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳຂອງພິກຂຸນີສຸນທະຣີນັນທາບໍ່

ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດ ເປັນຫຍັງ? ພິກຂຸນີສຸນທະຣີນັນທາຜູ້ກຳໜັດຈຶ່ງຍິນດີການຈັບຕ້ອງກາຍກັບຊາຍຜູ້ກຳໜັດນໍ? ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສກໍບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ"

ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງຕຳໜິພິກຂຸນີສຸນທະຣີນັນທາໂດຍປະການຕ່າງ ໆ ແລ້ວ ໄດ້ຕັດໂທດແຫ່ງຄວາມເປັນຄົນລ້ຽງຍາກ ບຳລຸງຍາກ ມັກຫຼາຍ ບໍ່ສັນໂດດ ຄວາມຄຸກຄີ ຄວາມຂີ້ຄ້ານ ຕັດຄຸນແຫ່ງຄວາມເປັນຄົນລ້ຽງງ່າຍ ບຳລຸງງ່າຍ ມັກໜ້ອຍ ສັນໂດດ ຄວາມຂັດເກົາ ຄວາມກຳຈັດກິເລດ ອາການໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນໂດຍປະການຕ່າງ ໆ ຊົງສະແດງທຳມິກະຖາແກ່ພິກຂຸທັງຫຼາຍໃຫ້ເໝາະສົມໃຫ້ຄ້ອຍຕາມກັບເລື້ອງນັ້ນ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ເຮົາຈະບັນຍັດສິກຂາບົດແກ່ພິກຂຸນີທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ
໒. ເພື່ອຄວາມຜາສຸກແຫ່ງສົງ
໓. ເພື່ອຂົ່ມພິກຂຸນີຜູ້ດື້ດ້ານ
໔. ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸນີຜູ້ມີສີນດີງາມ
໕. ເພື່ອປິດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໖. ເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ
໗. ເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ
໘. ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ
໙. ເພື່ອຄວາມຕັ້ງໝັ້ນແຫ່ງສັດທຳ
໑໐. ເພື່ອເອື້ອເຟື້ອວິໄນ

ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໕໗] ກໍພິກຂຸນີໃດກຳໜັດຍິນດີການຈັບຕ້ອງ ການລູບຄຳ ການຈັບ ການຕ້ອງ ຫຼື ການບີບຂອງຊາຍຜູ້ກຳໜັດບໍລິເວນໃຕ້ບ່າ ລົງມາເໜືອເຂົ່າຂຶ້ນໄປ ແມ່ນພິກຂຸນີນີ້ເປັນປາຣາຊິກາທີ່ຊື່ວ່າອຸບພະຊານຸມັນທະລິກາ ຫາສັງວາດບໍ່ໄດ້

**ເລື້ອງພິກຂຸນີສຸນທະຣີນັນທາ ຈົບ**

## ສິກຂາບົດວິພັງ

[໓໕໗] ຄໍາວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ມີການງານ ມີຊາດວັນນະ ມີຊື່ ມີຕະກູນ ມີລັກສະນະນິໄສ ມີຄຸນນະທໍາ ມີອາລົມຢ່າງໃດ ເປັນເຖຣະ ນະວະກະ ຫຼື ມັດຊິມະ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄໍາວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຊື່ວ່າພິກຂຸນີ ຍ້ອນອາໄສການທ່ຽວຂໍ ຊື່ວ່າພິກຂຸນີ ຍ້ອນໃຊ້ຜືນຜ້າທີ່ຖືກເຮັດໃຫ້ເສຍລາຄາ ຊື່ວ່າພິກຂຸນີ ຍ້ອນຮຽກກັນໂດຍໂວຫານ ຊື່ວ່າພິກຂຸນີ ຍ້ອນການປະຕິນຍາຕົນ ຊື່ວ່າພິກຂຸນີ ຍ້ອນພຣະພຸດທະເຈົ້າຊົງບວດໃຫ້ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ອຸປະສົມບົດດ້ວຍໄຕຣສະຣະນະຄົມ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຈະເລີນ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ມີສາຣະ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຍັງຕ້ອງສຶກສາ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ບໍ່ຕ້ອງສຶກສາ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ທີ່ສົງ ໘ ຝ່າຍພ້ອມພຽງກັນອຸປະສົມບົດໃຫ້ດ້ວຍຍັດຕິຈະຕຸດຖະກໍາທີ່ຖືກຕ້ອງ ສົມຄວນແກ່ເຫດ ໃນພິກຂຸນີທີ່ກ່າວມານັ້ນ ພິກຂຸນີທີ່ສົງ ໘ ຝ່າຍພ້ອມພຽງກັນອຸປະສົມບົດໃຫ້ດ້ວຍຍັດຕິຈະຕຸດຖະກໍາທີ່ຖືກຕ້ອງສົມຄວນແກ່ເຫດ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ກໍາໜັດ ໄດ້ແກ່ ພິກຂຸນີມີຄວາມຍິນດີ ເພ່ງເລັງ ມີຈິດຮັກແພງ

ທີ່ຊື່ວ່າ ຜູ້ກໍາໜັດ ໄດ້ແກ່ ຊາຍມີຄວາມຍິນດີ ເພ່ງເລັງ ມີຈິດຮັກແພງ

ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸດຜູ້ຊາຍ ບໍ່ແມ່ນຍັກ ບໍ່ແມ່ນເຜດ ບໍ່ແມ່ນສັດເດຍຣັດສານໂຕຜູ້ແລະເປັນຊາຍທີ່ຮູ້ດຽງສາ ສາມາດຈັບຕ້ອງກາຍໄດ້

ຄໍາວ່າ ໃຕ້ບ່າລົງມາ ໄດ້ແກ່ ຂ້າງລຸ່ມບ່າລົງມາ

ຄໍາວ່າ ເໜືອເຂົ່າຂຶ້ນໄປ ໄດ້ແກ່ ບໍລິເວນເຂົ່າສ່ວນເທິງຂຶ້ນໄປ

ທີ່ຊື່ວ່າ ຈັບຕ້ອງ ໄດ້ແກ່ ກິຣິຍາພຽງແຕ່ລູບຄໍາ

ທີ່ຊື່ວ່າ ລູບຄໍາ ໄດ້ແກ່ ລູບຄໍາຂຶ້ນລົງ

ທີ່ຊື່ວ່າ ຈັບ ໄດ້ແກ່ ລັກສະນະພຽງແຕ່ຈັບ

ທີ່ຊື່ວ່າ ຕ້ອງ ໄດ້ແກ່ ລັກສະນະພຽງສໍາຜັດ

ຄໍາວ່າ ຍິນດີ ຯລຯ ຫຼື ການບີບ ໄດ້ແກ່ ຍິນດີທີ່ຈະໃຫ້ຈັບອະໄວຍະວະແລ້ວບີບ

ຄໍາວ່າ ແມ່ນພິກຂຸນີນີ້ພຣະຜູ້ມີພຣະພາກເຈົ້າຕັດທຽບຄຽງພິກຂຸນີອົງກ່ອນ ໆ

ຄໍາວ່າ ເປັນປາຣາຊິກ ອະທິບາຍວ່າ ພິກຂຸນີກໍາໜັດຍິນດີການຈັບຕ້ອງ ການລູບຄໍາ ການຈັບ ການຕ້ອງ ຫຼື ການບີບຂອງຊາຍຜູ້ກໍາໜັດບໍລິເວນໃຕ້ບ່າລົງມາເໜືອເຂົ່າຂຶ້ນໄປ ຍ່ອມບໍ່ເປັນສະມະນະຍິງ ບໍ່ເປັນເຊື້ອສາຍສາກະຍະທິດາ ປຽບເໝືອນຄົນຖືກຕັດຫົວ ບໍ່ອາດມີຊີວິດຢູ່ໄດ້

ໂດຍການຕໍ່ຫົວເຂົ້າກັບຮ່າງກາຍໄດ້ອີກນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າເປັນປາຣາຊິກ

ຄຳວ່າ ຫາສັງວາດບໍ່ໄດ້ ອະທິບາຍວ່າ ທີ່ຊື່ວ່າສັງວາດ ໄດ້ແກ່ ກຳທີ່ເຮັດຮ່ວມກັນ ອຸດເທດທີ່ສູດຮ່ວມກັນ ຄວາມມີສິກຂາສະເໝີກັນ ນີ້ຊື່ວ່າສັງວາດ ສັງວາດນັ້ນບໍ່ມີກັບພິກຂຸນີອົງນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ຫາສັງວາດບໍ່ໄດ້

## ບົດພາຊະນີ

[໒໕໙] ທັງສອງຝ່າຍມີຄວາມກຳໜັດ ຝ່າຍໃດຝ່າຍໜຶ່ງໃຊ້ກາຍຈັບຕ້ອງກາຍບໍລິເວນໃຕ້ບ່າລົງມາເໜືອເຂົ່າຂຶ້ນໄປ ພິກຂຸນີຕ້ອງອາບັດປາຣາຊິກ ໃຊ້ກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດຖຸນລັດໄຈ ໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງກາຍ ຕ້ອງອາບັດຖຸນລັດໄຈ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ

ໃຊ້ຂອງໂຍນໄປຈັບຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັດທຸກກົດ

ໃຊ້ກາຍຈັບຕ້ອງກາຍບໍລິເວນເໜືອບ່າຂຶ້ນໄປໃຕ້ເຂົ່າລົງມາ ຕ້ອງອາບັດຖຸນລັດໄຈ ໃຊ້ກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ

ໃຊ້ຂອງໂຍນໄປຈັບຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັດທຸກກົດ

[໒໖໐] ຝ່າຍໜຶ່ງມີຄວາມກຳໜັດ ໃຊ້ກາຍຈັບຕ້ອງກາຍ ບໍລິເວນໃຕ້ບ່າລົງມາເໜືອເຂົ່າຂຶ້ນໄປ ຕ້ອງອາບັດຖຸນລັດໄຈ ໃຊ້ກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງເນື່ອງດ້ວຍກາຍຈັບຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຈັບຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັດທຸກກົດ

ໃຊ້ກາຍຈັບຕ້ອງກາຍບໍລິເວນເໜືອບ່າຂຶ້ນໄປໃຕ້ເຂົ່າລົງມາ ຕ້ອງອາບັດທຸກກົດ ໃຊ້ກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ

ໃຊ້ຂອງໂຍນໄປຈັບຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັດທຸກກົດ

[ຜ໖໑] ທັງສອງຝ່າຍມີຄວາມກຳໜັດ ໃຊ້ກາຍຈັບຕ້ອງກາຍຂອງຍັກ ເຜດ ບັນເດາະ ຫຼືສັດເດຍຣັດສານທີ່ແປງກາຍເປັນມະນຸດ ບໍລິເວນໃຕ້ບ່າລົງມາເໜືອເຂົ່າຂຶ້ນໄປ ຕ້ອງອາບັດຖຸນລັດໄຈ ໃຊ້ກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ

ໃຊ້ຂອງໂຍນໄປຈັບຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັດທຸກກົດ

ໃຊ້ກາຍຈັບຕ້ອງກາຍບໍລິເວນເໜືອບ່າຂຶ້ນໄປໃຕ້ເຂົ່າລົງມາ ຕ້ອງອາບັດທຸກກົດ ໃຊ້ກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ

ໃຊ້ຂອງໂຍນໄປຈັບຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັດທຸກກົດ

[ຜ໖໘] ຝ່າຍໜຶ່ງມີຄວາມກຳໜັດ ໃຊ້ກາຍຈັບຕ້ອງກາຍ ບໍລິເວນໃຕ້ບ່າລົງມາເໜືອເຂົ່າຂຶ້ນໄປ ຕ້ອງອາບັດທຸກກົດ ໃຊ້ກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ

ໃຊ້ຂອງໂຍນໄປຈັບຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັດທຸກກົດ

ໃຊ້ກາຍຈັບຕ້ອງກາຍບໍລິເວນເໜືອບ່າຂຶ້ນໄປໃຕ້ເຂົ່າລົງມາ ຕ້ອງອາບັດທຸກກົດ ໃຊ້ກາຍຈັບຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ

ໃຊ້ຂອງໂຍນໄປຈັບຕ້ອງກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໖໖໓] ໑. ພິກຂຸນີ ບໍ່ຈົງໃຈ
໒. ພິກຂຸນີ ບໍ່ມີສະຕິ
໓. ພິກຂຸນີ ຜູ້ບໍ່ຮູ້
໔. ພິກຂຸນີ ຜູ້ບໍ່ຍິນດີ
໕. ພິກຂຸນີ ວິກົນຈະລິດ
໖. ພິກຂຸນີ ຈິດຟຸ້ງຊ່ານ
໗. ພິກຂຸນີ ກະສັບກະສ່າຍຍ້ອນເວທະນາ
໘. ພິກຂຸນີ ຕົ້ນບັນຍັດ

ປາຣາຊິກສິກຂາບົດທີ ໑ ຈົບ

## ປາຣາຊິກສິກຂາບົດທີ ໒

## ວ່າດ້ວຍການປົກປິດໂທດ

## ເລື້ອງພິກຂຸນີສຸນທະຣີນັນທາ

[໖໖໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີສຸນທະຣີນັນທາຖືພາກັບທ້າວສາລະທະຫຼານຂອງນາງວິສາຂາມິຄາຣະມານດາ ແຕ່ປົກປິດເລື້ອງໄວ້ໃນຂະນະທີ່ທ້ອງຍັງອ່ອນ ໆ ເມື່ອທ້ອງແກ່ຈຶ່ງສິກໄປຄອດບຸດ

ພິກຂຸນີທັງຫຼາຍໄດ້ກ່າວກັບພິກຂຸນີຖຸນລະນັນທາດັ່ງນີ້ວ່າ "ແມ່ເຈົ້າ ສຸນທະຣີນັນທາສິກໄປບໍ່ດົນກໍເກີດບຸດ ທ່ານຄົງຈະຖືພາຕອນເປັນພິກຂຸນີແມ່ນບໍ" ພິກຂຸນີຖຸນລະນັນທາຈຶ່ງຍອມຮັບ ພິກຂຸນີທັງຫຼາຍກ່າວວ່າ "ແມ່ເຈົ້າ ທ່ານຮູ້ຢູ່ວ່າ ພິກຂຸນີຕ້ອງອາບັດປາຣາຊິກ ເປັນຫຍັງ ຈຶ່ງບໍ່ໂຈດເອງ ບໍ່ບອກແກ່ຄະນະນໍ?"

ພິກຂຸນີຖຸນລະນັນທາຕອບວ່າ "ແມ່ເຈົ້າ ຄວາມເສຍຫາຍຂອງພິກຂຸນີສຸນທະຣີນັນທານີ້ ກໍຄືຄວາມເສຍຫາຍຂອງຂ້ານ້ອຍ ຄວາມເສື່ອມກຽດຂອງພິກຂຸນີສຸນທະຣີນັນທາ ກໍຄືຄວາມເສື່ອມກຽດຂອງຂ້ານ້ອຍ ຄວາມອັບປະຍົດຂອງພິກຂຸນີສຸນທະຣີນັນທາ ກໍຄືຄວາມອັບປະຍົດຂອງຂ້ານ້ອຍ ຄວາມເສື່ອມລາບຂອງພິກຂຸນີສຸນທະຣີນັນທາ ກໍຄືຄວາມເສື່ອມລາບຂອງຂ້ານ້ອຍ

ຂ້ານ້ອຍຈະບອກຄວາມເສຍຫາຍຂອງຕົນ ຄວາມເສື່ອມກຽດຂອງຕົນ ຄວາມອັບປະຍົດຂອງຕົນ ຄວາມເສື່ອມລາບຂອງຕົນແກ່ຄົນອື່ນໄດ້ຢ່າງໃດ"

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຮູ້ຢູ່ ຈຶ່ງບໍ່ໂຈດພິກຂຸນີຜູ້ຕ້ອງທຳ ຄື ປາຣາຊິກດ້ວຍຕົນເອງ ບໍ່ບອກແກ່ຄະນະນໍ?" ເມື່ອແລ້ວພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາຮູ້ຢູ່ ບໍ່ໂຈດພິກຂຸນີຜູ້ຕ້ອງທຳ ຄື ປາຣາຊິກດ້ວຍຕົນເອງ ບໍ່ບອກແກ່ຄະນະ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພິກຂຸນີຖຸນລະນັນທາຮູ້ຢູ່ ຈຶ່ງບໍ່ໂຈດພິກຂຸນີຜູ້ຕ້ອງທຳ ຄື ປາຣາຊິກດ້ວຍຕົນເອງ ບໍ່ບອກແກ່ຄະນະນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໖໕] ກໍພິກຂຸນີໃດ ຮູ້ຢູ່ ບໍ່ໂຈດພິກຂຸນີຜູ້ຕ້ອງທຳ ຄື ປາຣາຊິກດ້ວຍຕົນເອງ ບໍ່ບອກແກ່ຄະນະ ກໍໃນການໃດ ພິກຂຸນີນັ້ນ ຍັງຄອງເພດຢູ່ກໍດີ ເຄື່ອນໄປກໍດີ ຖືກນາສະນະກໍດີ ໄປເຂົ້າຮີດກໍດີ ພາຍຫຼັງພິກຂຸນີຜູ້ຮູ້ເລື້ອງນັ້ນ ເພິ່ງກ່າວແນວນີ້ວ່າ "ແມ່ເຈົ້າ ເມື່ອກ່ອນຂ້ານ້ອຍຮູ້ຈັກພິກຂຸນີນີ້ດີວ່າ ນາງມີຄວາມປະພຶດແນວນີ້ ໆ ແຕ່ຂ້ານ້ອຍບໍ່ໄດ້ໂຈດດ້ວຍຕົນເອງ ບໍ່ໄດ້ບອກແກ່ຄະນະ ແມ່ນພິກຂຸນີນີ້ເປັນປາຣາຊິກທີ່ຊື່ວ່າວັດຊະປະຕິດສາທິກາ ຫາສັງວາດບໍ່ໄດ້

### ເລື້ອງພິກຂຸນີສຸນທະຣີນັນທາ ຈົບ

## ສິກຂາບົດວິພັງ

[໖໖໖] ຄຳວ່າ ກໍ ຯລຯ ໃດ ຄືຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າ ພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮູ້ຢູ່ ຄື ພິກຂຸນີນັ້ນຮູ້ເອງ ຄົນເຫຼົ່າອື່ນບອກທ່ານ ຫຼື ພິກຂຸນີທີ່ຕ້ອງອາບັດນັ້ນບອກ

ຄຳວ່າ ຕ້ອງທຳຄືປາຣາຊິກ ຄື ຕ້ອງອາບັດປາຣາຊິກ ໗ ຂໍ້ໃດຂໍ້ໜຶ່ງ

ຄຳວ່າ ບໍ່ໂຈດດ້ວຍຕົນເອງ ຄື ບໍ່ໂຈດເອງ

ຄຳວ່າ ບໍ່ບອກແກ່ຄະນະ ໝາຍເຖິງ ບໍ່ບອກພິກຂຸນີອື່ນ ໆ

ຄຳວ່າ ກໍໃນການໃດພິກຂຸນີນັ້ນຍັງຄອງເພດຢູ່ກໍດີ ເຄື່ອນໄປກໍດີ ເປັນຕົ້ນ ອະທິບາຍວ່າ ທີ່ຊື່ວ່າ ຄອງເພດຢູ່ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງພິກຂຸນີຜູ້ດຳລົງຢູ່ໃນເພດຂອງຕົນ ທີ່ຊື່ວ່າ ເຄື່ອນໄປ ຕັດໝາຍເຖິງພິກຂຸນີຜູ້ມໍຣະນະພາບ ທີ່ຊື່ວ່າ ຖືກນາສະນະ ຕັດໝາຍເຖິງພິກຂຸນີຜູ້ສຶກເອງຫຼືຖືກຜູ້ອື່ນໃຫ້ສຶກ ທີ່ຊື່ວ່າ ເຂົ້າຮີດ ຕັດໝາຍເຖິງພິກຂຸນີຜູ້ເຂົ້າຮີດເດຍຣະຖີພາຍຫຼັງພິກຂຸນີຜູ້ຮູ້ເລື່ອງນັ້ນເພິ່ງກ່າວແນວນີ້ວ່າ "ແມ່ເຈົ້າ ເມື່ອກ່ອນເຮົາຮູ້ຈັກພິກຂຸນີນີ້ດີວ່ານາງມີຄວາມປະພຶດແນວນີ້ ໆ"

ຄຳວ່າ ແຕ່ຂ້ານ້ອຍບໍ່ໄດ້ໂຈດດ້ວຍຕົນເອງ ຄື ບໍ່ໄດ້ໂຈດດ້ວຍຕົນເອງ

ຄຳວ່າ ບໍ່ໄດ້ບອກແກ່ຄະນະ ຄື ຂ້ານ້ອຍບໍ່ບອກພິກຂຸນີເຫຼົ່າອື່ນ

ຄຳວ່າ ແມ່ນພິກຂຸນີນີ້ ພຣະຜູ້ມີພຣະພາກເຈົ້າຕັດທຽບຄຽງພິກຂຸນີອົງກ່ອນ ໆ

ຄຳວ່າ ເປັນປາຣາຊິກ ອະທິບາຍວ່າ ພິກຂຸນີຮູ້ຢູ່ແລ້ວຖອນໃຈວ່າ "ເຮົາຈະບໍ່ໂຈດ ພິກຂຸນີຜູ້ຕ້ອງທຳຄື ປາຣາຊິກດ້ວຍຕົນເອງ ຈະບໍ່ບອກແກ່ໝູ່ຄະນະ" ທ່ານຍ່ອມບໍ່ເປັນສະມະນະຍິງ ບໍ່ເປັນເຊື້ອສາຍສາກະຍະທິດາ ປຽບເໝືອນໃບໄມ້ຫ່ຽວເຫຼືອງລຸດຈາກຂົ້ວນັ້ນແລ້ວ ບໍ່ອາດເປັນຂອງຂຽວສົດໄດ້ອີກ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ເປັນປາຣາຊິກ

ຄຳວ່າ ຫາສັງວາດບໍ່ໄດ້ ອະທິບາຍວ່າ ທີ່ຊື່ວ່າ ສັງວາດ ໄດ້ແກ່ ກຳທີ່ເຮັດຮ່ວມກັນ ອຸດເທດທີ່ສູດຮ່ວມກັນ ຄວາມມີສິກຂາສະເໝີກັນ ນີ້ຊື່ວ່າສັງວາດ ສັງວາດນັ້ນບໍ່ມີກັບພິກຂຸນີອົງນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ຫາສັງວາດບໍ່ໄດ້

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[ຜຜກ] ໑. ພິກຂຸນີ ບໍ່ບອກດ້ວຍຄິດວ່າ "ສົງຈັກໝາງໃຈ ຜິດຖຽງຂັດແຍ່ງ ຫຼື ວິວາດກັນ"

໒. ພິກຂຸນີ ບໍ່ບອກດ້ວຍຄິດວ່າ "ສົງຈັກແຕກແຍກ ຈັກຫ້າວແຫງ"

໓. ພິກຂຸນີ ບໍ່ບອກດ້ວຍຄິດວ່າ "ພິກຂຸນີນີ້ເປັນຄົນຫຍາບຊ້າ ດຸຮ້າຍ ຈັກເຮັດອັນຕະລາຍແກ່ຊີວິດ ຫຼື ອັນຕະລາຍແກ່ພົມມະຈັນໄດ້"

໔. ພິກຂຸນີ ບໍ່ບອກຍ້ອນບໍ່ພົບພິກຂຸນີອື່ນ ໆ ທີ່ສົມຄວນ

໕. ພິກຂຸນີ ບໍ່ປະສົງຈະປົກປິດແຕ່ຍັງບໍ່ໄດ້ບອກໃຜ

ຜ. ພິກຂຸນີ ບໍ່ບອກດ້ວຍຄິດວ່າ "ຜູ້ນັ້ນຈັກເປີດເຜີຍຍ້ອນກຳຂອງຕົນເອງ"
ຖ. ພິກຂຸນີ ວິກົນຈະລິດ
ຕຼ. ພິກຂຸນີ ຕົ້ນບັນຍັດ

**ປາຣາຊິກສິກຂາບົດທີ ໘ ຈົບ**

## ປາຣາຊິກສິກຂາບົດທີ ໓

## ວ່າດ້ວຍການປະພຶດຕາມພິກຂຸທີ່ຖືກສົງລົງອຸກເຂປະນີຍະກຳ

## ເລື່ອງພິກຂຸນີຖຸນລະນັນທາ

[ຜຜຕຼ] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາປະພຶດຕາມພຣະອະຣິດຖະ ຜູ້ມີບັນພະບຸຣຸດເປັນພານຂ້ານົກແຮ້ງທີ່ສົງພ້ອມພຽງກັນລົງອຸກເຂປະນີຍະກຳແລ້ວ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງປະພຶດຕາມພຣະອະຣິດຖະຜູ້ມີບັນພະບຸຣຸດເປັນພານຂ້ານົກແຮ້ງທີ່ສົງພ້ອມພຽງກັນລົງອຸກເຂປະນີຍະກຳແລ້ວນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາປະພຶດຕາມ ພິກຂຸຊື່ອະຣິດຖະຜູ້ມີບັນພະບຸຣຸດເປັນພານຂ້ານົກແຮ້ງທີ່ສົງພ້ອມພຽງກັນລົງອຸກເຂປະນີຍະກຳ ແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາຈຶ່ງປະພຶດຕາມພິກຂຸຊື່ ອະຣິດຖະ ຜູ້ມີບັນພະບຸຣຸດເປັນພານຂ້ານົກແຮ້ງທີ່ສົງພ້ອມພຽງກັນລົງອຸກເຂປະນີຍະກຳນໍ? ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[ຜຜຄ] ກໍພິກຂຸນີໃດ ປະພຶດຕາມພິກຂຸຜູ້ຖືກສົງພ້ອມພຽງກັນລົງອຸກເຂປະນີຍະກຳໂດຍທຳ ໂດຍວິໄນ ໂດຍສັດຖຸສາດນັ້ນ ຜູ້ບໍ່ເອື້ອເຟື້ອ ສົງຍັງບໍ່ຮັບຮອງ ຍັງບໍ່ໄດ້ເຮັດພິກຂຸຜູ້ມີ

ສັງວາດສະເໝີກັນໃຫ້ເປັນສະຫາຍ ພິກຂຸນີນັ້ນອັນພິກຂຸນີທັງຫຼາຍ ເພິ່ງວ່າກ່າວຕັກເຕືອນແນວນີ້ວ່າ "ແມ່ເຈົ້າ ພິກຂຸນັ້ນຖືກສົງພ້ອມພຽງກັນລົງອຸກເຂປະນີຍະກຳໂດຍທຳ ໂດຍວິໄນ ໂດຍສັດຖຸສາດ ເປັນຜູ້ບໍ່ເອື້ອເຟື້ອ ສົງຍັງບໍ່ໄດ້ຮັບຮອງ ຍັງບໍ່ໄດ້ເຮັດພິກຂຸຜູ້ມີສັງວາດສະເໝີກັນໃຫ້ເປັນສະຫາຍ ແມ່ເຈົ້າຢ່າປະພຶດຕາມພິກຂຸນັ້ນ" ພິກຂຸນີນັ້ນ ຜູ້ອັນພິກຂຸນີທັງຫຼາຍວ່າກ່າວຢູ່ແນວນີ້ ຍັງຍຶກຍ້ອງຢູ່ຢ່າງນັ້ນ ພິກຂຸນີນັ້ນອັນພິກຂຸນີທັງຫຼາຍ ເພິ່ງສູດສະມະນຸພາດຈົນຄົບ ໓ ຄັ້ງ ເພື່ອໃຫ້ສະລະເລື້ອງນັ້ນ ຖ້ານາງກຳລັງຖືກສູດສະມະນຸພາດກວ່າຈະຄົບ ໓ ຄັ້ງ ສະລະເລື້ອງນັ້ນໄດ້ເປັນການດີ ຖ້ານາງບໍ່ສະລະ ແມ່ນພິກຂຸນີນີ້ກໍເປັນປາຣາຊິກ ຊື່ອຸກຂິດຕານຸວັດຕິກາ ຫາສັງວາດບໍ່ໄດ້

**ເລື້ອງພິກຂຸນີຖຸນລະນັນທາ ຈົບ**

## ສິກຂາບົດວິພັງ

[໗໑໐] ຄຳວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໆລໆ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າ ພິກຂຸນີ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ສົງທີ່ຊື່ວ່າ ພ້ອມພຽງກັນ ຄື ມີສັງວາດສະເໝີກັນ ຢູ່ໃນສະມານະສັງວາດສີມາ

ທີ່ຊື່ວ່າ ຖືກ ໆລໆ ລົງອຸກເຂປະນີຍະກຳ ຄື ຖືກລົງອຸກເຂປະນີຍະກຳຍ້ອນບໍ່ເຫັນ ຍ້ອນບໍ່ເຮັດຄືນ ຫຼື ຍ້ອນບໍ່ສະລະຄືນອາບັດ

ຄຳວ່າ ໂດຍທຳ ໂດຍວິໄນ ຄື ໂດຍທຳໃດ ໂດຍວິໄນໃດ

ຄຳວ່າ ໂດຍສັດຖຸສາດ ຄື ໂດຍຄຳສັ່ງສອນຂອງພຣະຊິນນະເຈົ້າ ໂດຍຄຳສັ່ງສອນຂອງພຣະພຸດທະເຈົ້າ

ທີ່ຊື່ວ່າ ຜູ້ບໍ່ເອື້ອເຟື້ອ ຄື ບໍ່ຍອມຮັບສົງ ຄະນະ ບຸກຄົນ ຫຼື ກຳ

ທີ່ຊື່ວ່າ ສົງຍັງບໍ່ຮັບຮອງ ຄື ຖືກສົງຂັບໄລ່ແລ້ວຍັງບໍ່ຮຽກກັບເຂົ້າໝູ່

ທີ່ຊື່ວ່າ ຍັງບໍ່ໄດ້ເຮັດພິກຂຸຜູ້ມີສັງວາດສະເໝີກັນໃຫ້ເປັນສະຫາຍ ຄື ພິກຂຸທັງຫຼາຍ ຜູ້ມີສັງວາດສະເໝີກັນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ຜູ້ເປັນສະຫາຍ ພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳ ບໍ່ມີສັງວາດນັ້ນກັບພິກຂຸເຫຼົ່ານັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ "ຍັງບໍ່ໄດ້ເຮັດພິກຂຸຜູ້ມີສັງວາດສະເໝີກັນໃຫ້ເປັນສະຫາຍ"

ຄຳວ່າ ປະພຶດຕາມພິກຂຸ ໆລໆ ນັ້ນ ຄວາມວ່າ ພິກຂຸນັ້ນມີຄວາມເຫັນເຊັ່ນໃດ ມີຄວາມປາຖະໜາເຊັ່ນໃດ ມີຄວາມພໍໃຈເຊັ່ນໃດ ແມ່ນພິກຂຸນີນັ້ນ ກໍເປັນຜູ້ມີຄວາມເຫັນເຊັ່ນນັ້ນ ມີຄວາມປາຖະໜາເຊັ່ນນັ້ນ ມີຄວາມພໍໃຈເຊັ່ນນັ້ນ

ຄຳວ່າ ພິກຂຸນີນັ້ນ ໄດ້ແກ່ ພິກຂຸນີຜູ້ປະພຶດຕາມພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳ
ຄຳວ່າ ອັນພິກຂຸນີທັງຫຼາຍ ໄດ້ແກ່ ພິກຂຸນີເຫຼົ່າອື່ນ

ພິກຂຸນີທັງຫຼາຍ ທີ່ໄດ້ເຫັນໄດ້ຍິນ ເພິ່ງວ່າກ່າວຕັກເຕືອນທ່ານວ່າ "ແມ່ເຈົ້າ ພິກຂຸນັ້ນຖືກສົງພ້ອມພຽງກັນລົງອຸກເຂປະນີຍະກຳໂດຍທຳ ໂດຍວິໄນ ໂດຍສັດຖຸສາດ ເປັນຜູ້ບໍ່ເອື້ອເຟື້ອ ສົງຍັງບໍ່ໄດ້ຮັບຮອງ ຍັງບໍ່ໄດ້ເຮັດພິກຂຸຜູ້ມີສັງວາດສະເໝີກັນໃຫ້ເປັນສະຫາຍ ແມ່ເຈົ້າ ຢ່າປະພຶດຕາມພິກຂຸນັ້ນ" ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໒ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າທ່ານບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸນີທັງຫຼາຍໄດ້ຍິນບໍ່ວ່າກ່າວຕັກເຕືອນ ຕ້ອງອາບັດທຸກກົດ ພິກຂຸນີນັ້ນອັນພິກຂຸນີທັງຫຼາຍ ເພິ່ງຄຸມຕົວມາສູ່ທ່າມກາງສົງວ່າກ່າວຕັກເຕືອນວ່າ "ແມ່ເຈົ້າ ພິກຂຸນັ້ນຖືກສົງພ້ອມພຽງກັນລົງອຸກເຂປະນີຍະກຳໂດຍທຳ ໂດຍວິໄນ ໂດຍສັດຖຸສາດ ເປັນຜູ້ບໍ່ເອື້ອເຟື້ອ ສົງຍັງໄດ້ບໍ່ຮັບຮອງ ຍັງບໍ່ໄດ້ເຮັດພິກຂຸຜູ້ມີສັງວາດສະເໝີກັນໃຫ້ເປັນສະຫາຍ ແມ່ເຈົ້າຢ່າປະພຶດຕາມພິກຂຸນັ້ນ" ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໒ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າທ່ານບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸນີນັ້ນອັນພິກຂຸນີສົງເພິ່ງສູດສະມະນຸພາດ

## ວິທີສູດສະມະນຸພາດແລະກຳມະວາຈາສູດສະມະນຸພາດ

ພິກຂຸທັງຫຼາຍ ພິກຂຸນີສົງເພິ່ງສູດສະມະນຸພາດພິກຂຸນີນັ້ນແບບນີ້ ຄື ພິກຂຸນີ ຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[ຍັດ] ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸນີຊື່ນີ້ປະພຶດຕາມພິກຂຸຜູ້ຖືກສົງ ພ້ອມພຽງກັນລົງອຸກເຂປະນີຍະກຳໂດຍທຳ ໂດຍວິໄນ ໂດຍສັດຖຸສາດ ເປັນຜູ້ບໍ່ເອື້ອເຟື້ອ ສົງຍັງບໍ່ໄດ້ຮັບຮອງ ຍັງບໍ່ໄດ້ເຮັດພິກຂຸຜູ້ມີສັງວາດສະເໝີກັນໃຫ້ເປັນສະຫາຍ ທ່ານບໍ່ສະລະເລື້ອງນັ້ນ ຖ້າສົງພ້ອມກັນແລ້ວເພິ່ງສູດສະມະນຸພາດພິກຂຸນີຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸນີນີ້ປະພຶດຕາມພິກຂຸຜູ້ຖືກສົງພ້ອມພຽງກັນລົງອຸກເຂປະນີຍະກຳໂດຍທຳ ໂດຍວິໄນ ໂດຍສັດຖຸສາດ ເປັນຜູ້ບໍ່ເອື້ອເຟື້ອ ສົງຍັງບໍ່ໄດ້ຮັບຮອງ ຍັງບໍ່ໄດ້ເຮັດພິກຂຸຜູ້ມີສັງວາດສະເໝີກັນໃຫ້ເປັນສະຫາຍ ທ່ານບໍ່ສະລະເລື້ອງນັ້ນ ສົງສູດສະມະນຸພາດພິກຂຸຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ແມ່ເຈົ້າອົງໃດເຫັນດ້ວຍກັບການສູດສະມະນຸພາດພິກຂຸນີນີ້ເພື່ອໃຫ້ສະລະເລື້ອງນັ້ນ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງໂຈດ

ແມ່ນຄັ້ງທີ ໒ ຂ້າພະເຈົ້າຂໍກ່າວຄວາມນີ້ ຯລຯ
ແມ່ນຄັ້ງທີ ໓ ຂ້າພະເຈົ້າຂໍກ່າວ ຄວາມນີ້ ຯລຯ

ພິກຂຸນີຊື່ນີ້ ສົງສູດສະມະນຸພາດ ເພື່ອໃຫ້ສະລະເລື້ອງນັ້ນແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກໍາມະວາຈາ ໘ ຄັ້ງ ຕ້ອງອາບັດຖຸນລັດໄຈ ຈົບກໍາມະວາຈາຄັ້ງສຸດທ້າຍ ຕ້ອງອາບັດປາຣາຊິກ

ຄໍາວ່າ ພິກຂຸນີແມ່ນນີ້ ພຣະຜູ້ມີພຣະພາກເຈົ້າຕັດທຽບຄຽງພິກຂຸນີອົງກ່ອນ ໆ

ຄໍາວ່າ ເປັນປາຣາຊິກ ອະທິບາຍວ່າ ພິກຂຸນີຖືກສົງສູດສະມະນຸພາດຈົນຄົບ ໓ ຄັ້ງກໍຍັງບໍ່ຍອມສະລະ ນາງຍ່ອມບໍ່ເປັນສະມະນະຍິງ ບໍ່ເປັນເຊື້ອສາຍສາກະຍະທິດາ ປຽບເໝືອນແຜ່ນສິລາໜາແຕກອອກເປັນ ໘ ສ່ຽງ ຈະປະສານໃຫ້ຕິດສະນິດເປັນແຜ່ນດຽວກັນອີກບໍ່ໄດ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ເປັນປາຣາຊິກ

ຄໍາວ່າ ຫາສັງວາດບໍ່ໄດ້ ອະທິບາຍວ່າ ທີ່ຊື່ວ່າສັງວາດ ໄດ້ແກ່ ກໍາທີ່ເຮັດຮ່ວມກັນ ອຸດເທດທີ່ສູດຮ່ວມກັນ ຄວາມມີສິກຂາສະເໝີກັນ ນີ້ຊື່ວ່າສັງວາດ ສັງວາດນັ້ນບໍ່ມີກັບພິກຂຸນີອົງນັ້ນດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ຫາສັງວາດບໍ່ໄດ້

## ບົດພາຊະນີ

### ຕິກະປາຣາຊິກ

[ຜ໗໘] ກໍາທີ່ເຮັດຖືກຕ້ອງ ພິກຂຸນີສໍາຄັນວ່າເປັນກໍາທີ່ເຮັດຖືກຕ້ອງ ບໍ່ສະລະ ຕ້ອງອາບັດປາຣາຊິກ

ກໍາທີ່ເຮັດຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບໍ່ສະລະ ຕ້ອງອາບັດປາຣາຊິກ

ກໍາທີ່ເຮັດຖືກຕ້ອງ ພິກຂຸນີສໍາຄັນວ່າເປັນກໍາທີ່ເຮັດບໍ່ຖືກຕ້ອງ ບໍ່ສະລະ ຕ້ອງອາບັດປາຣາຊິກ

### ຕິກະທຸກກົດ

ກໍາທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສໍາຄັນວ່າເປັນກໍາທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ

ກໍາທີ່ເຮັດບໍ່ຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກໍາທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສໍາຄັນວ່າເປັນກໍາທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດທຸກກົດ

### ອະນາບັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດປາຣາຊິກ ຄື

[ຜ໗໙] ໑. ພິກຂຸນີ ຍັງບໍ່ຖືກສູດສະມະນຸພາດ

໔. ພິກຂຸນີ ຍອມສະລະ
໖. ພິກຂຸນີ ວິກົນຈະລິດ
໘. ພິກຂຸນີ ຕົ້ນບັນຍັດ

**ປາຣາຊິກສິກຂາບົດທີ ໖ ຈົບ**

# ປາຣາຊິກສິກຂາບົດທີ ໘

## ວ່າດ້ວຍວັດຖຸ ໘ ມີການຍິນດີການຈັບມືຂອງຊາຍເປັນຕົ້ນ

## ເລື່ອງພິກຂຸນີສັບພັກຄີ

[໖໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີສັບພັກຄີກຳໜັດ ຍິນດີການຈັບມືແດ່ ຍິນດີການທີ່ຊາຍຜູ້ກຳໜັດຈັບແຈສັງຄາຕິແດ່ ຢືນຄຽງຄູ່ກັນກັບຊາຍແດ່ ສົນທະນາກັນແດ່ ໄປທີ່ນັດໝາຍແດ່ ຍິນດີການທີ່ຊາຍມາຫາແດ່ ຍ່າງນຳເຂົ້າໄປສູ່ທີ່ລັບແດ່ ນ້ອມກາຍເຂົ້າໄປເພື່ອຄຸກຄີກັນດ້ວຍກາຍນັ້ນ ເພື່ອຈະເສບອະສັດທຳນັ້ນ ກັບຊາຍຜູ້ກຳໜັດແດ່

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພວກພິກຂຸນີສັບພັກຄີ ຈຶ່ງກຳໜັດຍິນດີການຈັບມືແດ່ ຍິນດີການທີ່ຊາຍຜູ້ກຳໜັດຈັບແຈສັງຄາຕິແດ່ ຢືນຄຽງຄູ່ກັນກັບຊາຍແດ່ ສົນທະນາກັນແດ່ ໄປທີ່ນັດໝາຍແດ່ ຍິນດີການທີ່ຊາຍມາຫາແດ່ ຍ່າງນຳເຂົ້າໄປສູ່ທີ່ລັບແດ່ ນ້ອມກາຍເຂົ້າໄປເພື່ອຄຸກຄີກັນດ້ວຍກາຍນັ້ນ ເພື່ອຈະເສບອະສັດທຳກັບຊາຍຜູ້ກຳໜັດແດ່ນໍ” ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີກຳໜັດ ຍິນດີການຈັບມືແດ່ ຍິນດີການທີ່ຊາຍຜູ້ກຳໜັດຈັບແຈສັງຄາຕິແດ່ ຢືນຄຽງຄູ່ກັນກັບຊາຍແດ່ ສົນທະນາກັນແດ່ ໄປທີ່ນັດໝາຍແດ່ ຍິນດີການທີ່ຊາຍມາຫາແດ່ ຍ່າງນຳເຂົ້າໄປສູ່ທີ່ລັບແດ່ ນ້ອມກາຍເຂົ້າໄປເພື່ອຄຸກຄີກັນດ້ວຍກາຍນັ້ນເພື່ອຈະເສບອະສັດທຳກັບຊາຍຜູ້ກຳໜັດແດ່ ແມ່ນບໍ?” ພວກພິກຂຸທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີສັບພັກຄີມີຄວາມກຳໜັດຍິນດີການຈັບມືແດ່ ຍິນດີການທີ່

ຊາຍຜູ້ກຳໜັດຈັບແຈສັງຄາຕິແດ່ ຢືນຄຽງຄູ່ກັນກັບຊາຍແດ່ ສົນທະນາກັນແດ່ ໄປທີ່ນັດໝາຍແດ່ ຍິນດີການທີ່ຊາຍມາຫາແດ່ ຍ່າງນຳເຂົ້າໄປສູ່ທີ່ລັບແດ່ ນ້ອມກາຍເຂົ້າໄປເພື່ອຄຸກຄີກັນດ້ວຍກາຍ ນັ້ນເພື່ອຈະເສບອະສັດທຳກັບຊາຍຜູ້ກຳໜັດແດ່ນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສ ຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໗໘] ກໍພິກຂຸນີໃດ ກຳໜັດເພິ່ງຍິນດີການຈັບມື ຍິນດີການທີ່ຊາຍຜູ້ກຳໜັດຈັບແຈ ສັງຄາຕິ ຢືນຄຽງຄູ່ກັນກັບຊາຍ ສົນທະນາກັນ ໄປທີ່ນັດໝາຍ ຍິນດີການທີ່ຊາຍມາຫາ ຍ່າງນຳ ເຂົ້າໄປສູ່ທີ່ລັບ ຫຼື ນ້ອມກາຍເຂົ້າໄປເພື່ອຄຸກຄີກັນດ້ວຍກາຍນັ້ນ ເພື່ອຈະເສບອະສັດທຳນັ້ນ ກັບ ຊາຍຜູ້ກຳໜັດ ແມ່ນພິກຂຸນີນີ້ເປັນປາຣາຊິກຊື່ ອັດຖະວັດຖຸກາ ຫາສັງວາດບໍ່ໄດ້

### ເລື້ອງພິກຂຸນີສັບພັກຄີ ຈົບ

## ສິກຂາບົດວິພັງ

[໖໗໖] ຄຳວ່າ ກໍ ຯລຯ ໃດ ຄືຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະ ພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ກຳໜັດ ໄດ້ແກ່ ພິກຂຸນີມີຄວາມຍິນດີ ເພ່ງເລັງ ມີຈິດຮັກແພງ

ທີ່ຊື່ວ່າ ຜູ້ກຳໜັດ ໄດ້ແກ່ ຊາຍມີຄວາມຍິນດີ ເພ່ງເລັງ ມີຈິດຮັກແພງ

ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸດຜູ້ຊາຍ ບໍ່ແມ່ນຍັກ ບໍ່ແມ່ນເຜດ ບໍ່ແມ່ນສັດເດຍຣັດສານຕົວ ຜູ້ ແຕ່ເປັນຊາຍທີ່ຮູ້ດຽງສາ ສາມາຈັບຕ້ອງກາຍໄດ້

ຄຳວ່າ ຍິນດີການຈັບມື ຄວາມວ່າ ທີ່ຊື່ວ່າ ມື ໝາຍເອົາຕັ້ງແຕ່ແຂນສອກເຖິງປາຍເລັບ ພິກຂຸນີຍິນດີການຈັບອະໄວຍະວະບໍລິເວນເໜືອບ່າຂຶ້ນໄປ ໃຕ້ເຂົ່າລົງມາ ເພື່ອຈະເສບອະສັດທຳ ນັ້ນ ຕ້ອງອາບັດຖຸນລັດໄຈ

ຄຳວ່າ ຍິນດີການ ຯລຯ ຈັບແຈສັງຄາຕິ ຄື ຍິນດີການຈັບຜ້ານຸ່ງ ຫຼື ຜ້າຫົ່ມເພື່ອຈະ ເສບອະສັດທຳນັ້ນ ຕ້ອງອາບັດຖຸນລັດໄຈ

ຄຳວ່າ ຢືນຄຽງຄູ່ກັນ ຄື ຢືນຢູ່ໃນໄລຍະແຂນຂອງຊາຍເພື່ອຈະເສບອະສັດທຳນັ້ນ ຕ້ອງ ອາບັດຖຸນລັດໄຈ

ຄຳວ່າ ສົນທະນາກັນ ຄື ຢືນສົນທະນາຢູ່ໃນໄລຍະແຂນຂອງຊາຍ ເພື່ອຈະເສບອະສັດທຳນັ້ນ ຕ້ອງອາບັດຖຸນລັດໄຈ

ຄຳວ່າ ໄປທີ່ນັດໝາຍ ຄວາມວ່າ ພິກຂຸນີທີ່ຊາຍສັ່ງວ່າ "ຈົ່ງມາຫາໃນສະຖານທີ່ຊື່ນີ້" ແລ້ວໄປເພື່ອຈະເສບອະສັດທຳນັ້ນ ຕ້ອງອາບັດທຸກກົດທຸກ ໆ ບາດກ້າວ ຍ່າງເຂົ້າຮອດໄລຍະແຂນຂອງຊາຍ ຕ້ອງອາບັດຖຸນລັດໄຈ

ຄຳວ່າ ຍິນດີການທີ່ຊາຍມາຫາ ຄວາມວ່າ ຍິນດີການທີ່ຊາຍມາເພື່ອຈະເສບອະສັດທຳ ຕ້ອງອາບັດທຸກກົດ ຍ່າງເຂົ້າຮອດໄລຍະແຂນ ຕ້ອງອາບັດຖຸນລັດໄຈ

ຄຳວ່າ ຍ່າງນຳເຂົ້າໄປສູ່ທີ່ລັບ ຄວາມວ່າ ຍ່າງເຂົ້າຮອດສະຖານທີ່ທີ່ປົກປິດດ້ວຍວັດຖຸຢ່າງໃດຢ່າງໜຶ່ງເພື່ອຈະເສບອະສັດທຳນັ້ນ ຕ້ອງອາບັດຖຸນລັດໄຈ

ຄຳວ່າ ຫຼື ນ້ອມກາຍເຂົ້າໄປເພື່ອຄຸກຄີກັນດ້ວຍກາຍນັ້ນ ຄວາມວ່າ ຢູ່ໃນໄລຍະແຂນຂອງຊາຍ ນ້ອມກາຍເຂົ້າໄປເພື່ອຈະເສບອະສັດທຳນັ້ນ ຕ້ອງອາບັດຖຸນລັດໄຈ

ຄຳວ່າ ແມ່ນພິກຂຸນີນີ້ ພຣະຜູ້ມີພຣະພາກເຈົ້າຕັດຫຼູບຄຽງພິກຂຸນີອົງກ່ອນ ໆ

ຄຳວ່າ ເປັນປາຣາຊິກ ອະທິບາຍວ່າ ພິກຂຸນີເມື່ອເຮັດວັດຖຸຄົບທັງ ໘ ປະການຍ່ອມ ບໍ່ເປັນສະມະນະຍິງ ບໍ່ເປັນເຊື້ອສາຍສາກະຍະທິດາ ປຽບເໝືອນຕົ້ນຕານຍອດກຸດທີ່ບໍ່ອາດງອກໄດ້ຕໍ່ໄປ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ເປັນປາຣາຊິກ

ຄຳວ່າ ຫາສັງວາດບໍ່ໄດ້ ອະທິບາຍວ່າ ທີ່ຊື່ວ່າສັງວາດ ໄດ້ແກ່ ກຳທີ່ເຮັດຮ່ວມກັນ ອຸດເຫດທີ່ສູດຮ່ວມກັນ ຄວາມມີສິກຂາສະເໝີກັນ ນີ້ຊື່ວ່າສັງວາດ ສັງວາດນັ້ນບໍ່ມີກັບ ພິກຂຸນີອົງນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ຫາສັງວາດບໍ່ໄດ້

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[ຜາກາ] ໑. ພິກຂຸນີ ບໍ່ຈົງໃຈ
໒. ພິກຂຸນີ ບໍ່ມີສະຕິ
໓. ພິກຂຸນີ ຜູ້ບໍ່ຮູ້
໔. ພິກຂຸນີ ຜູ້ບໍ່ຍິນດີ
໕. ພິກຂຸນີ ວິກົນຈະລິດ
໖. ພິກຂຸນີ ຈິດຟຸ້ງຊ່ານ
໗. ພິກຂຸນີ ກະສັບກະສ່າຍຍ້ອນເວທະນາ
໘. ພິກຂຸນີ ຕົ້ນບັນຍັດ

**ປາຣາຊິກສິກຂາບົດທີ ໔ ຈົບ**

## ບົດສະຫຼຸບ

ແມ່ເຈົ້າທັງຫຼາຍ ທຳຄືປາຣາຊິກ ໘ ສິກຂາບົດ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວເປັນຂໍ້ ໆ ເຊິ່ງຖ້າພິກຂຸນີຕ້ອງເຂົ້າແລ້ວ ຍ່ອມຢູ່ຮ່ວມກັບພິກຂຸນີທັງຫຼາຍບໍ່ໄດ້ ເປັນປາຣາຊິກ ຫາສັງວາດບໍ່ໄດ້ ເໝືອນກ່ອນບວດ

ຂ້າພະເຈົ້າ ຂໍຖາມແມ່ເຈົ້າທັງຫຼາຍໃນທຳຄືປາຣາຊິກ ໘ ສິກຂາບົດນັ້ນວ່າ "ແມ່ເຈົ້າທັງຫຼາຍບໍລິສຸດແລ້ວບໍ?"

ຂ້າພະເຈົ້າ ຂໍຖາມເປັນຄັ້ງທີ ໒ ວ່າ "ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວບໍ?"

ຂ້າພະເຈົ້າ ຂໍຖາມເປັນຄັ້ງທີ ໓ ວ່າ "ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວບໍ?"

ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວ ໃນທຳຄືປາຣາຊິກ ໘ ສິກຂາບົດນີ້ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

**ປາຣາຊິກກັນໃນພິກຂຸນີວິພັງ ຈົບ**

# ໔. ສັງຄາທິເສສະກັນ

ແມ່ເຈົ້າທັງຫຼາຍ ທຳຄືສັງຄາທິເສດ ໑໗ ສິກຂາບົດເຫຼົ່ານີ້ມາເຖິງວາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບ

## ສັງຄາທິເສດສິກຂາບົດທີ ໑

### ວ່າດ້ວຍການກໍ່ຄະດີພິພາດ

### ເລື່ອງອຸປາສິກາກັບພິກຂຸນີຖຸນລະນັນທາ

[ຜຖຼ] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ອຸປາສິກຄົນໜຶ່ງຖວາຍໂຮງເກັບຂອງແກ່ພິກຂຸນີສົງແລ້ວຕາຍໄປ ເຂົາມີບຸດ ໔ ຄົນ ຄົນໜຶ່ງບໍ່ມີສັດທາບໍ່ເຫຼື້ອມໃສ ອີກຄົນໜຶ່ງມີສັດທາເຫຼື້ອມໃສ ບຸດທັງສອງແບ່ງສົມບັດຂອງພໍ່ ບຸດຄົນທີ່ບໍ່ມີສັດທາບໍ່ເຫຼື້ອມໃສໄດ້ກ່າວກັບບຸດຄົນທີ່ມີສັດທາເຫຼື້ອມໃສນັ້ນດັ່ງນີ້ວ່າ "ພວກເຮົາຍັງມີໂຮງເກັບຂອງຢູ່ ເອົາໂຮງເກັບຂອງນີ້ມາແບ່ງກັນເທີ້ນ"

ເມື່ອເຂົາກ່າວຢ່າງນັ້ນ ບຸດຄົນທີ່ມີສັດທາເຫຼື້ອມໃສໄດ້ກ່າວກັບບຸດຄົນທີ່ບໍ່ມີສັດທາບໍ່ເຫຼື້ອມໃສດັ່ງນີ້ວ່າ "ທ່ານຢ່າໄດ້ກ່າວແນວນີ້ ພໍ່ຂອງພວກເຮົາຖວາຍໂຮງເກັບຂອງໃຫ້ພິກຂຸນີສົງແລ້ວ"

ບຸດຄົນທີ່ບໍ່ມີສັດທາບໍ່ເຫຼື້ອມໃສໄດ້ກ່າວກັບບຸດຄົນມີສັດທາເຫຼື້ອມໃສນັ້ນ ແມ່ນຄັ້ງທີ ໔ ດັ່ງນີ້ວ່າ "ພວກເຮົາຍັງມີໂຮງເກັບຂອງຢູ່ ເອົາມັນມາແບ່ງກັນເທີ້ນ" ບຸດຄົນທີ່ມີສັດທາເຫຼື້ອມໃສກໍກ່າວກັບບຸດຄົນທີ່ບໍ່ມີສັດທາບໍ່ເຫຼື້ອມໃສດັ່ງນີ້ວ່າ "ທ່ານຢ່າໄດ້ກ່າວແນວນີ້ ພໍ່ຂອງພວກເຮົາຖວາຍໂຮງເກັບຂອງໃຫ້ພິກຂຸນີສົງແລ້ວ"

ບຸດຄົນທີ່ບໍ່ມີສັດທາບໍ່ເຫຼື້ອມໃສກ່າວກັບບຸດຄົນທີ່ມີສັດທາເຫຼື້ອມໃສ ແມ່ນຄັ້ງທີ ໓ ວ່າ "ພວກເຮົາຍັງມີໂຮງເກັບຂອງຢູ່ ເອົາມັນມາແບ່ງກັນເທີ້ນ"

ຕໍ່ມາ ບຸດຄົນທີ່ມີສັດທາເຫຼື້ອມໃສຄິດວ່າ ຖ້າເຮົາໄດ້ໂຮງເກັບຂອງກໍຈັກຖວາຍພິກຂຸນີສົງ ຈຶ່ງກ່າວກັບບຸດຄົນທີ່ບໍ່ມີສັດທາບໍ່ເຫຼື້ອມໃສດັ່ງນີ້ວ່າ "ຕົກລົງ ເຮົາຈະແບ່ງມໍລະດົກກັນ" ຄັ້ງນັ້ນ ເມື່ອທັງສອງກຳລັງແບ່ງກັນຢູ່ ໂຮງເກັບຂອງຕົກເປັນສົມບັດຂອງບຸດຄົນທີ່ບໍ່ມີສັດທາບໍ່ເຫຼື້ອມໃສ ຕໍ່ມາ ບຸດຄົນທີ່ບໍ່ມີສັດທາບໍ່ເຫຼື້ອມໃສໄດ້ເຂົ້າໄປຫາພິກຂຸນີທັງຫຼາຍ ແລ້ວໄດ້ກ່າວດັ່ງນີ້ວ່າ "ເຊີນທ່ານທັງຫຼາຍອອກໄປ ໂຮງເກັບຂອງເປັນສົມບັດຂອງຂ້າພະເຈົ້າ"

ເມື່ອເຂົາກ່າວແນວນີ້ ພິກຂຸນີຖຸນລະນັນທາໄດ້ກ່າວກັບບຸຣຸດນັ້ນດັ່ງນີ້ວ່າ "ທ່ານຢ່າໄດ້ກ່າວແນວນີ້ ພໍ່ຂອງທ່ານຖວາຍໂຮງເກັບຂອງໃຫ້ພິກຂຸນີສົງແລ້ວ"

ທັງສອງຝ່າຍໂຕ້ຖຽງກັນວ່າ ຖວາຍ ບໍ່ໄດ້ຖວາຍ ຈຶ່ງພາກັນໄປຟ້ອງ ພວກມະຫາອຳໝາດຜູ້ພິພາກສາ

ພວກມະຫາອຳໝາດຖາມວ່າ "ແມ່ເຈົ້າ ມີໃຜແດ່ ພໍຈະຮູ້ເຫັນເປັນພະຍານໄດ້ວ່າ ໂຮງເກັບຂອງເຂົາຖວາຍພິກຂຸນີສົງແລ້ວ"

ເມື່ອພວກມະຫາອຳໝາດກ່າວແນວນີ້ ພິກຂຸນີຖຸນລະນັນທາ ຈຶ່ງໄດ້ກ່າວກັບພວກມະຫາອຳໝາດດັ່ງນີ້ວ່າ "ພວກທ່ານເຄີຍເຫັນ ຫຼື ໄດ້ຍິນແດ່ບໍ? ວ່າ ເມື່ອຈະຖວາຍທານຈະຕ້ອງມີພະຍານ"

ພວກມະຫາອຳໝາດຕອບວ່າ "ແມ່ເຈົ້າເວົ້າຖືກ" ຈຶ່ງໄດ້ຕັດສິນມອບໂຮງເກັບຂອງໃຫ້ພິກຂຸນີສົງໄປ

ບຸຣຸດນັ້ນ ແພ້ຄະດີ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ແມ່ຍິງຊົ່ວ ຫົວໂລ້ນເຫຼົ່ານີ້ບໍ່ແມ່ນສະມະນະຍິງ ເປັນຫຍັງ ຈຶ່ງໃຫ້ຜູ້ພິພາກສາຍຶດໂຮງເກັບຂອງຂອງເຮົາໄປແນວນັ້ນນໍ"

ພິກຂຸນີຖຸນລະນັນທາບອກເລື້ອງນັ້ນໃຫ້ພວກມະຫາອຳໝາດຮູ້ ພວກມະຫາອຳໝາດໄດ້ປັບສິນໄໝເຂົາ ເມື່ອບຸຣຸດນັ້ນຖືກປັບໄໝ ຈຶ່ງໃຫ້ສ້າງທີ່ພັກໃຫ້ອາຊີວົກໄວ້ໃກ້ ໆ ທີ່ຢູ່ພິກຂຸນີແລ້ວສັ່ງອາຊີວົກວ່າ "ພວກທ່ານຈົ່ງຊ່ອຍກັນເວົ້າໃສ່ພິກຂຸນີເຫຼົ່ານີ້"

ພິກຂຸນີຖຸນລະນັນທາ ຈຶ່ງບອກເລື້ອງນັ້ນໃຫ້ພວກມະຫາອຳໝາດຮູ້ ພວກມະຫາອຳໝາດສັ່ງໃຫ້ຈັບບຸຣຸດນັ້ນຈອງຈຳໄວ້ ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ "ຄັ້ງທຳອິດພວກພິກຂຸນີຟ້ອງໃຫ້ເຈົ້າໜ້າທີ່ຍຶດໂຮງເກັບຂອງ ຄັ້ງທີ ໒ ຟ້ອງໃຫ້ປັບສິນໄໝ ຄັ້ງທີ ໓ ຟ້ອງໃຫ້ຈອງຈຳ ຕໍ່ໄປຈະຟ້ອງໃຫ້ຖືກປະຫານແມ່ນບໍ?"

ພິກຂຸນີທັງຫຼາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາ ຈຶ່ງມັກກໍ່ຄະດີພິພາດກັນແນວນັ້ນນໍ?" ລຳດັບນັ້ນ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາເປັນຜູ້ມັກກໍ່ຄະດີພິພາດກັນ ແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງ

ຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາ ຈຶ່ງເປັນຜູ້ມັກກໍ່ຄະດີພິພາດກັນ ນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໗໙] ກໍພິກຂຸນີໃດ ກໍ່ຄະດີພິພາດກັບຄະຫະບໍດີ ກັບບຸດຄະຫະບໍດີ ກັບຂ້າທາດ ຫຼື ກັບກຳມະກອນ ໂດຍທີ່ສຸດແມ່ນວ່າ ກັບສະມະນະປະຣິພາຊົກ ພິກຂຸນີນີ້ ຕ້ອງທຳ ຄື ສັງຄາທິເສດທີ່ຊື່ວ່າປະຖະມາປັດຕິກະ ນິດສາຣະນີຍະ

## ເລື່ອງອຸປາສິກາກັບພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໖໘໐] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ກໍ່ຄະດີພິພາດ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງ ຜູ້ກໍ່ຄະດີຄວາມຟ້ອງຮ້ອງທີ່ຕ້ອງຕັດສິນຜິດຖືກກັນ

ທີ່ຊື່ວ່າ ຄະຫະບໍດີ ໄດ້ແກ່ ຊາຍຜູ້ຄອງເຮືອນຄົນໃດຄົນໜຶ່ງ

ທີ່ຊື່ວ່າ ບຸດຄະຫະບໍດີ ໄດ້ແກ່ ບຸດແລະພີ່ນ້ອງຊາຍຄົນໃດຄົນໜຶ່ງ

ທີ່ຊື່ວ່າ ຂ້າທາດ ໄດ້ແກ່ ຂ້າທາດໃນເຮືອນ ຂ້າທາດຊື້ມາດ້ວຍເງິນ ຂ້າທາດຊະເລີຍ

ທີ່ຊື່ວ່າ ກຳມະກອນ ໄດ້ແກ່ ຄົນຮັບຈ້າງໃຊ້ແຮງງານ

ທີ່ຊື່ວ່າ ສະມະນະປະຣິພາຊົກ ໄດ້ແກ່ ນັກບວດໃນລັດທິປະຣິພາຊົກ ຍົກເວັ້ນພິກຂຸ ພິກຂຸນີ ສິກຂະມານາ ສາມະເນນ ແລະ ສາມເນຣີ

ພິກຂຸນີສະແຫວງຫາເພື່ອນ ຫຼື ຍ່າງໄປດ້ວຍຕັ້ງໃຈວ່າ "ຈະກໍ່ຄະດີ" ຕ້ອງອາບັດທຸກກົດ ບອກເລື້ອງຂອງຄົນໜຶ່ງ (ແກ່ຕຸລາການ) ຕ້ອງອາບັດທຸກກົດ ບອກເລື້ອງຂອງຄົນທີ່ສອງ ຕ້ອງອາບັດຖຸນລັດໄຈ ເມື່ອສານຕັດສິນແລ້ວ ຕ້ອງອາບັດສັງຄາທິເສດ

ຄຳວ່າ ປະຖະມາປັດຕິກະ ຄື ຕ້ອງອາບັດພ້ອມການລ່ວງລະເມີດວັດຖຸໂດຍບໍ່ຕ້ອງສູດສະມະນຸພາດ

ຄຳວ່າ ນິດສາຣະນີຍະ ໄດ້ແກ່ ເຮັດໃຫ້ຖືກຂັບໄລ່ອອກຈາກໝູ່

ຄຳວ່າ ສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນສົງເທົ່ານັ້ນໃຫ້ມານັດ ດຶງເຂົ້າຫາອາບັດເດີມ ຮຽກເຂົ້າໝູ່ ພິກຂຸນີຫຼາຍອົງກໍເຮັດບໍ່ໄດ້ ພິກຂຸນີອົງດຽວກໍເຮັດບໍ່ໄດ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ສັງຄາທິເສດ

ຄຳວ່າ ສັງຄາທິເສດ ນີ້ເປັນການຂະໜານນາມ ເປັນຄຳຮຽກໝວດອາບັດນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ສັງຄາທິເສດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[ຜຫ໑] ໑. ພິກຂຸນີ ຖືກພວກຊາວບ້ານດຶງຕົວໄປ

໒. ພິກຂຸນີ ຂໍອາຮັກຂາ

໓. ພິກຂຸນີ ບອກບໍ່ເຈາະຈົງບຸກຄົນ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສັງຄາທິເສດສິກຂາບົດທີ ໑ ຈົບ**

# ສັງຄາທິເສດສິກຂາບົດທີ ໒

## ວ່າດ້ວຍການບວດໃຫ້ສະຕີຜູ້ເປັນໂຈນ

## ເລື້ອງຊາຍາເຈົ້າລິດສະຫວີກັບພິກຂຸນີຖຸນລະນັນທາ

[ຜຫ໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ໃນນະຄອນເວສາລີ ຊາຍາຂອງເຈົ້າລິດສະຫວີ ອົງໜຶ່ງປະພຶດນອກໃຈພຣະສະວາມີ ເຈົ້າລິດສະຫວີຜູ້ນັ້ນຕັດກັບຍິງນັ້ນດັ່ງນີ້ວ່າ "ເອີາລະ ທ່ານຈົ່ງເຊົາເຮັດ ຖ້າບໍ່ເຊັ່ນນັ້ນເຮົາຈະລົງໂທດທ່ານ" ແມ່ນຈະຖືກວ່າກ່າວຕັກເຕືອນແນວນີ້ ນາງກໍບໍ່ເຊື່ອ ຕໍ່ມາ ຄະນະເຈົ້າລິດສະຫວີໄດ້ປະຊຸມກັນດ້ວຍຣາຊະກິດບາງຢ່າງຢູ່ ເຈົ້າລິດສະຫວີອົງນັ້ນ ໄດ້ຕັດກັບພວກເຈົ້າລິດສະຫວີທັງຫຼາຍດັ່ງນີ້ວ່າ "ທ່ານທັງຫຼາຍ ຂໍອະນຸຍາດໃຫ້ເຮົາຈັດການກັບສະຕີຄົນໜຶ່ງ"

ຄະນະໄດ້ຖາມຂຶ້ນວ່າ "ສະຕີຜູ້ນັ້ນຄືຜູ້ໃດ?"

ເຈົ້າລິດສະຫວີນັ້ນຕອບວ່າ "ນາງຜູ້ນັ້ນ ເປັນພັນລະຍາປະພຶດນອກໃຈຂອງຂ້າພະເຈົ້າເອງ ຂ້າພະເຈົ້າຈັກຂ້ານາງຖິ້ມ"

ຄະນະກ່າວວ່າ "ທ່ານຈົ່ງຮູ້ເອງເທີ້ນ"

ເມື່ອສະຕີນັ້ນຮູ້ຂ່າວວ່າ ສາມີປະສົງຈະຂ້ານາງ ຈຶ່ງເກັບຂອງສຳຄັນແລະມີຄ່າໜີໄປສູ່ນະຄອນສາວັດຖີ ເຂົ້າໄປຫາພວກເດຍຣະຖີຂໍບວດ ພວກເດຍຣະຖີບໍ່ຕ້ອງການບວດໃຫ້ ນາງຈຶ່ງເຂົ້າໄປຫາພວກພິກຂຸນີຂໍບວດ ພວກພິກຂຸນີກໍບໍ່ຕ້ອງການຈະບວດໃຫ້ ຈຶ່ງເຂົ້າໄປຫາພິກຂຸນີຖຸນລະນັນທາດ້ວຍການເອົາຂອງມີຄ່າຖວາຍໃຫ້ແລ້ວຂໍບວດ ພິກຂຸນີຖຸນລະນັນທາຮັບເອົາສິ່ງຂອງແລ້ວບວດໃຫ້ນາງ

ຕໍ່ມາ ເຈົ້າລິດສະຫວີນັ້ນຊົງຕາມຫາສະຕີນັ້ນໄປເຖິງນະຄອນສາວັດຖີ ພົບນາງບວດຢູ່ໃນສຳນັກພິກຂຸນີ ຈຶ່ງເຂົ້າໄປເຝົ້າພຣະເຈົ້າປະເສນທິໂກສົນເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຂາບທູນພຣະເຈົ້າປະເສນທິໂກສົນດັ່ງນີ້ວ່າ "ຂໍເດຊະ ຊາຍາຂອງຂ້າພະເຈົ້າໄດ້ລັກຂອງມີຄ່າໜີມານະຄອນສາວັດຖີ ຂໍພຣະອົງຈົ່ງຊົງອະນຸຍາດໃຫ້ຈັບນາງແດ່ເທີ້ນ"

ພຣະເຈົ້າປະເສນທິໂກສົນຕັດວ່າ "ເຊີນທ່ານສືບຫານາງ ພົບແລ້ວຈົ່ງມາບອກເຮົາ"

ເຈົ້າລິດສະຫວີຂາບທູນວ່າ "ຂ້ານ້ອຍ ເຫັນນາງບວດຢູ່ໃນສຳນັກພິກຂຸນີ"

ພຣະເຈົ້າປະເສນທິໂກສົນຕັດວ່າ "ຖ້ານາງບວດຢູ່ໃນສຳນັກພິກຂຸນີແລ້ວ ຜູ້ໃດກໍເຮັດຫຍັງບໍ່ໄດ້ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວຄຸມຄອງ ຂໍໃຫ້ນາງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ"

ຄັ້ງນັ້ນ ເຈົ້າລິດສະຫວີໄດ້ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງບວດໃຫ້ສະຕີຜູ້ເປັນໂຈນແນວນັ້ນນໍ?"

ພິກຂຸນີທັງຫຼາຍ ໄດ້ຍິນເຈົ້າລິດສະຫວີນັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງບວດໃຫ້ສະຕີຜູ້ເປັນໂຈນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາບວດໃຫ້ສະຕີຜູ້ເປັນໂຈນ ແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາຈຶ່ງບວດໃຫ້ສະຕີຜູ້ເປັນໂຈນນໍ

ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ໆລໆ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໗໓] ກໍ ພິກຂຸນີໃດ ຮູ້ຢູ່ ບໍ່ບອກພຣະຣາຊາ ສົງ ຄະນະ ສະມາຄົມ ຫຼື ກຸ່ມຊົນໃຫ້ຮູ້ ບວດໃຫ້ສະຕີຜູ້ເປັນໂຈນ ເຊິ່ງເປັນທີ່ຮູ້ກັນວ່າຕ້ອງໂທດປະຫານ ເວັ້ນໄວ້ແຕ່ສະຕີທີ່ສົມຄວນ ແມ່ນພິກຂຸນີນີ້ກໍຕ້ອງທຳ ຄື ສັງຄາທິເສດທີ່ຊື່ວ່າ ປະຖະມາປັດຕິກະ ນິດສາຣະນີຍະ

### ເລື້ອງຊາຍາເຈົ້າລິດສະຫວີກັບພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໖໗໔] ຄຳວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໆລໆ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າ ພິກຂຸນີ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮູ້ຢູ່ ຄື ພິກຂຸນີນັ້ນຮູ້ເອງ ຄົນອື່ນບອກໃຫ້ທ່ານຮູ້ ຫຼື ສະຕີຜູ້ເປັນໂຈນ ນັ້ນບອກ

ທີ່ຊື່ວ່າ ສະຕີຜູ້ເປັນໂຈນ ຄື ສະຕີຜູ້ຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ມີລາຄາ ໕ ມາສົກ ຫຼື ຫຼາຍກວ່າ ໕ ມາສົກ ໂດຍສ່ວນແຫ່ງຈິດຄິດຈະລັກ ນີ້ຊື່ວ່າ ສະຕີຜູ້ເປັນໂຈນ

ທີ່ຊື່ວ່າ ຕ້ອງໂທດປະຫານ ໝາຍເຖິງ ຜູ້ກະທຳຄວາມຜິດໂທດເຖິງປະຫານຊີວິດ

ທີ່ຊື່ວ່າ ເປັນທີ່ຮູ້ກັນ ໝາຍເຖິງ ຜູ້ຄົນເຫຼົ່າອື່ນກໍຮູ້ວ່າຜູ້ນີ້ຕ້ອງໂທດປະຫານຊີວິດ

ຄຳວ່າ ບໍ່ບອກ ໆລໆ ໃຫ້ຮູ້ ຄື ບໍ່ບອກ

ທີ່ຊື່ວ່າ ພຣະຣາຊາ ຄວາມວ່າ ພຣະຣາຊາຊົງປົກຄອງໃນທີ່ໃດ ຕ້ອງຂໍພຣະບໍຣົມຣາຊານຸຍາດໃນຖິ່ນນັ້ນ

ທີ່ຊື່ວ່າ ສົງ ພຣະຜູ້ມີພຣະພາກເຈົ້າຕັດເຖິງພິກຂຸນີສົງ ຕ້ອງຂໍອະນຸຍາດພິກຂຸນີສົງ

ທີ່ຊື່ວ່າ ຄະນະ ຄວາມວ່າ ຄະນະປົກຄອງໃນຖິ່ນໃດ ຕ້ອງບອກຄະນະໃນຖິ່ນນັ້ນ

ທີ່ຊື່ວ່າ ສະມາຄົມ ຄວາມວ່າ ສະມາຄົມປົກຄອງໃນຖິ່ນໃດຕ້ອງບອກສະມາຄົມໃນຖິ່ນນັ້ນ

ທີ່ຊື່ວ່າ ກຸ່ມຊົນ ຄວາມວ່າ ກຸ່ມຊົນປົກຄອງໃນຖິ່ນໃດ ຕ້ອງບອກກຸ່ມຊົນໃນຖິ່ນນັ້ນ

ຄຳວ່າ ເວັ້ນໄວ້ແຕ່ສະຕີທີ່ສົມຄວນ ອະທິບາຍວ່າ ຍົກເວັ້ນແຕ່ສະຕີຜູ້ສົມຄວນບວດໄດ້

ທີ່ຊື່ວ່າ ສະຕີທີ່ສົມຄວນ ມີ ໒ ປະເພດ ຄື (໑) ຜູ້ທີ່ບວດໃນສຳນັກເດຍຣະຖີ (໒) ຜູ້ທີ່ບວດໃນສຳນັກພິກຂຸນີອື່ນ ພິກຂຸນີຄິດວ່າ "ເຮົາຈັກບວດໃຫ້ເວັ້ນໄວ້ແຕ່ຜູ້ທີ່ຜ່ານການບວດມາ

ແລ້ວ" ແລ້ວຈຶ່ງສະແຫວງຫາຄະນະ ກຳມະວາຈາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ

ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ ຈົບກຳມະວາຈາຄັ້ງສຸດທ້າຍ ອຸປັດຊາຕ້ອງອາບັດສັງຄາທິເສດ ຄະນະ ແລະ ອາຈານຕ້ອງອາບັດທຸກກົດ

ຄຳວ່າ ແມ່ນພິກຂຸນີນີ້ ພຣະຜູ້ມີພຣະພາກເຈົ້າຕັດຫງຸບຄຽງພິກຂຸນີອື່ງກ່ອນ

ຄຳວ່າ ປະຖະມາປັດຕິກະ ຄື ຕ້ອງອາບັດພ້ອມກັບການລ່ວງລະເມີດວັດຖຸໂດຍບໍ່ຕ້ອງສູດສະມະນຸພາດ

ຄຳວ່າ ນິດສາຣະນີຍະ ໄດ້ແກ່ ເຮັດໃຫ້ຖືກຂັບໄລ່ອອກຈາກໝູ່

ຄຳວ່າ ສັງຄາທິເສດ ຄວາມວ່າ ສຳລັບອາບັດນີ້ ສົງເທົ່ານັ້ນໃຫ້ມານັດ ໗ລ໗ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ສັງຄາທິເສດ

## ບົດພາຊະນີ

[໖໘໕] ສະຕີຜູ້ເປັນໂຈນ ພິກຂຸນີສຳຄັນວ່າເປັນສະຕີຜູ້ເປັນໂຈນ ບວດໃຫ້ ຕ້ອງອາບັດສັງຄາທິເສດ ເວັ້ນໄວ້ແຕ່ສະຕີທີ່ສົມຄວນ

ສະຕີຜູ້ເປັນໂຈນ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ ເວັ້ນໄວ້ແຕ່ສະຕີທີ່ສົມຄວນ

ສະຕີຜູ້ເປັນໂຈນ ພິກຂຸນີສຳຄັນວ່າບໍ່ແມ່ນສະຕີຜູ້ເປັນໂຈນ ບວດໃຫ້ ເວັ້ນໄວ້ແຕ່ສະຕີທີ່ສົມຄວນ ບໍ່ຕ້ອງອາບັດ

ບໍ່ແມ່ນສະຕີຜູ້ເປັນໂຈນ ພິກຂຸນີສຳຄັນວ່າເປັນສະຕີຜູ້ເປັນໂຈນບວດໃຫ້ ຕ້ອງອາບັດທຸກກົດ

ບໍ່ແມ່ນສະຕີຜູ້ເປັນໂຈນ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ

ບໍ່ແມ່ນສະຕີຜູ້ເປັນໂຈນ ພິກຂຸນີສຳຄັນວ່າບໍ່ແມ່ນສະຕີຜູ້ເປັນໂຈນ ບວດໃຫ້ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໖໘໖] ໑. ພິກຂຸນີ ບໍ່ຮູ້ວ່າເປັນສະຕີຜູ້ເປັນໂຈນຈຶ່ງບວດໃຫ້

໒. ພິກຂຸນີ ຂໍອະນຸຍາດແລ້ວບວດໃຫ້

໓. ພິກຂຸນີ ບວດໃຫ້ສະຕີຜູ້ເປັນໂຈນຜູ້ສົມຄວນ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສັງຄາທິເສດສິກຂາບົດທີ ໒ ຈົບ**

# ສັງຄາທິເສດສິກຂາບົດທີ ໖

## ວ່າດ້ວຍການເຂົ້າບໍລິເວນໝູ່ບ້ານຕາມລຳພັງເປັນຕົ້ນ

## ເລື້ອງພິກຂຸນີອັນເຕວາສິນີຂອງພຣະພັດທະກາປິລານີ

[໗໘໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ອັນເຕວາສິນີຂອງພຣະພັດທະກາປິລານີຜິດຖຽງກັບພິກຂຸນີທັງຫຼາຍ ຈຶ່ງໜີໄປສູ່ຕະກູນຍາດໃນໝູ່ບ້ານ

ພຣະພັດທະກາປິລານີບໍ່ເຫັນທ່ານ ຈຶ່ງຖາມພິກຂຸນີທັງຫຼາຍວ່າ "ພິກຂຸນີຊື່ນີ້ຫາຍໄປໃສແລ້ວ?"

ພິກຂຸນີທັງຫຼາຍຕອບວ່າ "ແມ່ເຈົ້າ ທ່ານຜິດຖຽງກັບພິກຂຸນີທັງຫຼາຍແລ້ວຫາຍໄປ"

ພຣະພັດທະກາປິລານີກ່າວວ່າ "ທີ່ໝູ່ບ້ານນັ້ນ ມີຕະກູນຍາດຂອງພິກຂຸນີນີ້ຢູ່ ທ່ານທັງຫຼາຍຈົ່ງໄປສືບຫາເບິ່ງຢູ່ໃນຕະກູນຍາດນາງ"

ພິກຂຸນີທັງຫຼາຍໄດ້ພາກັນໄປຮອດໝູ່ບ້ານນັ້ນ ພົບພິກຂຸນີນັ້ນແລ້ວໄດ້ກ່າວດັ່ງນີ້ວ່າ "ແມ່ເຈົ້າ ເປັນຫຍັງ ທ່ານມາຄົນດຽວ ບໍ່ຖືກໃຜເຮັດຫຍັງແດ່ບໍ?"

ທ່ານຕອບວ່າ "ແມ່ເຈົ້າທັງຫຼາຍ ເຮົາບໍ່ຖືກໃຜເຮັດຫຍັງເລີຍ"

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງໄປສູ່ບໍລິເວນໝູ່ບ້ານອົງດຽວແນວນັ້ນນໍ?" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີເຂົ້າສູ່ບໍລິເວນໝູ່ບ້ານ ອົງດຽວແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງໄປສູ່ບໍລິເວນໝູ່ບ້ານອົງດຽວນໍ? ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸນີໃດ ໄປສູ່ບໍລິເວນໝູ່ບ້ານອົງດຽວ ແມ່ນພິກຂຸນີນີ້ ຕ້ອງທໍາ ຄື ສັງຄາທິເສດ ທີ່ຊື່ວ່າປະຖະມາປັດຕິກະ ນິດສາຣະນີຍະ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸນີທັງຫຼາຍແບບນີ້

**ເລື່ອງພິກຂຸນີອັນເຕວາສີນີຂອງພຣະພັດທະກາປິລານີ ຈົບ**

## ເລື່ອງພິກຂຸນີ ໔ ອົງ

[ຜຕຼຕຼ] ສະໄໝນັ້ນ ພິກຂຸນີ ໔ ອົງ ເດີນທາງໄກຈາກເມືອງສາເກດໄປນະຄອນສາວັດຖີ ລະຫວ່າງທາງຕ້ອງຂ້າມແມ່ນ້ຳ ລໍາດັບນັ້ນ ພິກຂຸນີເຫຼົ່ານັ້ນໄດ້ເຂົ້າໄປຫາພວກເຮືອຈ້າງແລ້ວໄດ້ກ່າວດັ່ງນີ້ວ່າ "ທ່ານທັງຫຼາຍ ໂຜດສົງເຄາະພວກເຮົາໃຫ້ຂ້າມຟາກດ້ວຍເທີ້ນ"

ພວກເຮືອຈ້າງຕອບວ່າ "ແມ່ເຈົ້າ ພວກເຮົາບໍ່ສາມາດພາທ່ານຂ້າມໄປເທື່ອລະ ໔ ອົງໄດ້" ນາຍເຮືອຈ້າງຄົນໜຶ່ງຈຶ່ງພາພິກຂຸນີອົງໜຶ່ງຂ້າມຟາກໄປກ່ອນພໍຂ້າມຮອດຟາກແລ້ວ ໄດ້ທໍາການຂົ່ມຂືນພິກຂຸນີອົງທີ່ຂ້າມຟາກໄປນໍາ ນາຍເຮືອຈ້າງອີກຄົນທີ່ຍັງບໍ່ໄດ້ຂ້າມຟາກກໍໄດ້ຂົ່ມຂືນນາງພິກຂຸນີທີ່ຍັງບໍ່ຂ້າມຟາກ

ພາຍຫຼັງຕໍ່ມາ ພິກຂຸນີທັງສອງນັ້ນ ເມື່ອພົບກັນແລ້ວໄດ້ຖາມກັນວ່າ "ທ່ານບໍ່ຖືກຂົ່ມຂືນແມ່ນບໍ?"

ອົງທີ່ຖືກຖາມຕອບວ່າ "ແມ່ເຈົ້າ ເຮົາຖືກຂົ່ມຂືນ ແລ້ວທ່ານບໍ່ຖືກແມ່ນບໍ?"

ອີກອົງໜຶ່ງຕອບວ່າ "ເຮົາກໍຖືກຂົ່ມຂືນຄືກັນ"

ເມື່ອນາງພິກຂຸນີທັງສອງເຖິງນະຄອນສາວັດຖີ ໄດ້ບອກເລື້ອງນີ້ໃຫ້ພິກຂຸນີທັງຫຼາຍຮູ້ ບັນດາພິກຂຸນີຜູ້ມັກໜ້ອຍ ໆລໆ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງຂ້າມຝັ່ງແມ່ນ້ຳອົງດຽວແບບນັ້ນນໍ?" ເມື່ອແລ້ວພິກຂຸນີເຫຼົ່ານັ້ນ ໄດ້ນໍາເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຂ້າມຝັ່ງແມ່ນ້ຳອົງດຽວ ແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາໜິວ່າ "ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງຂ້າມຝັ່ງແມ່ນ້ຳອົງດຽວນໍ ພິກຂຸທັງຫຼາຍ ການກະທໍາແບບນີ້ ບໍ່ໄດ້

ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເລື່ອໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂື້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂື້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸນີໃດ ໄປສູ່ບໍລິເວນໝູ່ບ້ານອົງດຽວ ຫຼື ຂ້າມຝັ່ງແມ່ນ້ຳອົງດຽວ ແມ່ນພິກຂຸນີນີ້ກໍຕ້ອງທຳ ຄື ສັງຄາທິເສດທີ່ຊື່ວ່າ ປະຖະມາປັດຕິກະ ນິດສາຣະນີຍະ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸນີທັງຫຼາຍແນວນີ້

## ເລື້ອງພິກຂຸນີ ໔ ອົງ ຈົບ

## ເລື້ອງພິກຂຸນີຫຼາຍອົງ

[໖໗໙] ສະໄໝນັ້ນ ພິກຂຸນີຈຳນວນຫຼາຍອົງໄດ້ພາກັນເດີນທາງໄປສູ່ນະຄອນສາວັດຖີ ໃນແຄວັນໂກສົນ ໄດ້ເຂົ້າໄປສູ່ໝູ່ບ້ານໜຶ່ງໃນຕອນແລງ ໃນບັນດາພິກຂຸນີເຫຼົ່ານັ້ນ ພິກຂຸນີອົງໜຶ່ງມີຮູບງາມ ໜ້າເບິ່ງ ໜ້າຊື່ນຊົມ ຊາຍຄົນໜຶ່ງພໍໄດ້ເຫັນກໍມີຈິດຮັກແພງພິກຂຸນີນັ້ນ ໄດ້ຈັດທີ່ນອນຖວາຍພິກຂຸນີທັງຫຼາຍແຍກຈາກພິກຂຸນີທີ່ມີຮູບງາມອົງນັ້ນ ແຕ່ພິກຂຸນີນັ້ນຮູ້ທັນວ່າ "ຊາຍຄົນນີ້ຖືກຣາຄະຄອບງຳ ຖ້າເຂົາມາຫາຕອນກາງຄືນ ເຮົາຕ້ອງຖືກທຳຮ້າຍຢ່າງແນ່ນອນ" ຈຶ່ງໜີໄປນອນອີກຕະກູນໜຶ່ງໂດຍບໍ່ບອກພິກຂຸນີທັງຫຼາຍ ຄັ້ງນັ້ນ ຊາຍຜູ້ນັ້ນ ມາຄົ້ນຫາພິກຂຸນີຮູບງາມນັ້ນ ໄດ້ເຮັດໃຫ້ພິກຂຸນີທັງຫຼາຍ ຕື່ນຂື້ນມາ ແລະ ບໍ່ເຫັນພິກຂຸນີຮູບງາມນັ້ນ ຈຶ່ງກ່າວແນວນີ້ວ່າ "ນາງອອກໄປກັບຜູ້ຊາຍແລ້ວແມ່ນບໍ?"

ເມື່ອຜ່ານຣາຕີນັ້ນ ພິກຂຸນີຮູບງາມນັ້ນ ໄດ້ເຂົ້າໄປຫາພິກຂຸນີ ພວກພິກຂຸນີໄດ້ຖາມນາງວ່າ "ມື້ຄືນນີ້ທ່ານອອກໄປກັບຜູ້ຊາຍແມ່ນບໍ?" ພິກຂຸນີຮູບງາມນັ້ນຕອບວ່າ ຂ້ານ້ອຍບໍ່ໄດ້ອອກໄປກັບຜູ້ຊາຍ" ແລ້ວໄດ້ບອກເລື້ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີ ຈຶ່ງອອກໄປພັກແຮມທີ່ອື່ນໃນເວລາກາງຄືນພຽງອົງດຽວແນວນັ້ນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງ

ສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີອອກໄປພັກແຮມທີ່ອື່ນໃນເວລາກາງຄືນພຽງອົງດຽວແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງອອກໄປພັກແຮມທີ່ອື່ນໃນເວລາກາງຄືນພຽງອົງດຽວນໍ? ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວ ຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸນີໃດໄປສູ່ບໍລິເວນໝູ່ບ້ານອົງດຽວ ຂ້າມຝັ່ງແມ່ນ້ຳອົງດຽວ ຫຼື ອອກໄປພັກແຮມທີ່ອື່ນໃນຣາຕີອົງດຽວ ແມ່ນພິກຂຸນີນີ້ ກໍຕ້ອງທຳ ຄື ສັງຄາທິເສດຊື່ປະຖະມາປັດຕິກະ ນິດສາຣະນີຍະ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸນີທັງຫຼາຍແບບນີ້

**ເລື້ອງພິກຂຸນີຫຼາຍອົງ ຈົບ**

## ເລື້ອງພິກຂຸນີຫຼາຍອົງ

[໖໗໐] ສະໄໝນັ້ນ ພິກຂຸນີຈຳນວນຫຼາຍໄດ້ເດີນທາງໄກໄປສູ່ນະຄອນສາວັດຖີ ໃນແຄວ້ນໂກສົນ ພິກຂຸນີອົງໜຶ່ງປວດອຸດຈາຣະ ຈຶ່ງຫຼີກອອກຈາກຄະນະໄປຂັບຖ່າຍ ເຮັດໃຫ້ນາງຕ້ອງຍ່າງຕາມຫຼັງໄປອົງດຽວ ພວກໂຈນເຫັນນາງຍ່າງຢູ່ຄົນດຽງຈຶ່ງໄດ້ກະທຳການຂົ່ມຂືນນາງເມື່ອແລ້ວນາງໄດ້ກັບມາຫາພິກຂຸນີເຫຼົ່ານັ້ນ ພວກພິກຂຸນີໄດ້ຖາມນາງວ່າ "ເປັນຫຍັງ ທ່ານຈຶ່ງຫຼີກອອກໄປຈາກໝູ່ຄະນະ ຢູ່ອົງດຽວບໍ່ຢ້ານຖືກພວກໂຈນຂົ່ມຂືນບໍ?" ພິກຂຸນີນັ້ນຈຶ່ງຕອບວ່າ "ແມ່ເຈົ້າ ເຮົາຖືກຂົ່ມຂືນແລ້ວ"

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງຍ່າງຫຼີກອອກໄປຈາກໝູ່ຄະນະຢູ່ອົງດຽວແບບນີ້ນໍ?" ຯລຯ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຍ່າງຫຼີກອອກຈາກໝູ່ຄະນະຢູ່ອົງດຽວ ແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງຍ່າງຫຼີກອອກຈາກໝູ່ຄະນະຢູ່ອົງດຽວນໍ? ພິກຂຸທັງຫຼາຍ

ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນອີກໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໕໙໑] ອັນໜຶ່ງ ພິກຂຸນີໃດ ໄປສູ່ບໍລິເວນໝູ່ບ້ານອົງດຽວ ຂ້າມຝັ່ງແມ່ນ້ຳອົງດຽວ ອອກໄປພັກແຮມທີ່ອື່ນໃນຣາຕີອົງດຽວ ຫຼື ຫຼີກອອກຈາກໝູ່ຄະນະຢູ່ອົງດຽວ ແມ່ນພິກຂຸນີນີ້ ກໍຕ້ອງທຳຄື ສັງຄາທິເສດ ທີ່ຊື່ວ່າ ປະຖະມາປັດຕິກະ ນິດສາຣະນີຍະ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໕໙໔] ຄຳວ່າ ອັນໜຶ່ງ ฯລฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ ฯລฯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ໄປສູ່ບໍລິເວນໝູ່ບ້ານອົງດຽວ ຄວາມວ່າ ເມື່ອທ່ານກ້າວຂາກ້າວທີ ໑ ເຂົ້າສູ່ບໍລິເວນຮົ້ວຂອງໝູ່ບ້ານທີ່ມີຮົ້ວລ້ອມ ຕ້ອງອາບັດຖຸນລັດໄຈ ກ້າວຂາກ້າວທີ ໒ ຕ້ອງອາບັດສັງຄາທິເສດ

ເມື່ອທ່ານກ້າວຂາກ້າວທີ ໑ ເຂົ້າສູ່ອຸປະຈານຂອງໝູ່ບ້ານທີ່ບໍ່ມີຮົ້ວລ້ອມ ຕ້ອງອາບັດຖຸນລັດໄຈ ກ້າວຂາກ້າວທີ ໒ ຕ້ອງອາບັດສັງຄາທິເສດ

ຄຳວ່າ ຂ້າມຝັ່ງແມ່ນ້ຳອົງດຽວ ຄວາມວ່າ ທີ່ຊື່ວ່າແມ່ນ້ຳ ຄື ສະຖານທີ່ມີນ້ຳເຊິ່ງເມື່ອພິກຂຸນີຄອງຜ້າປົກປິດໂຕແລ້ວຍ່າງຂ້າມອັນຕະຣະວາສົກປຽກໄດ້ ເມື່ອທ່ານກ້າວຂາກ້າວທີ ໑ ຂ້າມໄປຕ້ອງອາບັດຖຸນລັດໄຈ ກ້າວຂາກ້າວທີ ໒ ຂ້າມໄປຕ້ອງອາບັດສັງຄາທິເສດ

ຄຳວ່າ ອອກໄປພັກແຮມທີ່ອື່ນໃນຣາຕີອົງດຽວ ຄວາມວ່າ ເມື່ອທ່ານອອກໄປລະຫັດຖະບາດ (ໄລຍະຫ່າງສອງສອກເຄິ່ງ) ຈາກພິກຂຸນີທີ່ເປັນເພື່ອນໃນເວລາຮຸ່ງແຈ້ງ ຕ້ອງອາບັດຖຸນລັດໄຈ ພົ້ນຫັດຖະບາດແລ້ວ ຕ້ອງອາບັດສັງຄາທິເສດ

ຄຳວ່າ ຫຼື ຫຼີກອອກໄປຈາກຄະນະຢູ່ອົງດຽວ ຄວາມວ່າ ໃນປ່າເຊິ່ງບໍ່ມີໝູ່ບ້ານຢູ່ ເມື່ອຍ່າງໄປກຳລັງຈະພົ້ນໄລຍະທີ່ຈະແນມເຫັນໄດ້ ຫຼື ບໍລິເວນທີ່ເພື່ອນພິກຂຸນີຈະໄດ້ຍິນສຽງ ຕ້ອງອາບັດຖຸນລັດໄຈ ເມື່ອພົ້ນໄປແລ້ວ ຕ້ອງອາບັດສັງຄາທິເສດ

ຄຳວ່າ ແມ່ນພິກຂຸນີນີ້ ພຣະຜູ້ມີພຣະພາກເຈົ້າຕັດທຽບຄຽງພິກຂຸນີອົງກ່ອນ ໆ

ຄຳວ່າ ປະຖະມາປັດຕິກະ ຄື ຕ້ອງອາບັດພ້ອມກັບການລ່ວງລະເມີດວັດຖຸໂດຍບໍ່ຕ້ອງສູດສະມະນຸພາດ

ຄຳວ່າ ນິດສາຣະນີຍະ ໄດ້ແກ່ ເຮັດໃຫ້ຖືກຂັບໄລ່ອອກຈາກໝູ່

ຄຳວ່າ ສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ມານັດ ຯລຯ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ສັງຄາທິເສດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໖໙໕] ໑. ພິກຂຸນີທີ່ເພື່ອນພິກຂຸນີຈາກໄປ ສິກ ມໍຣະນະພາບ ຫຼື ໄປເຂົ້າຮີດ

໒. ພິກຂຸນີຜູ້ມີເຫດຂັດຂ້ອງ

໓. ພິກຂຸນີວິກົນຈະລິດ

໔. ພິກຂຸນີຕົ້ນບັນຍັດ

**ສັງຄາທິເສດສິກຂາບົດທີ ໓ ຈົບ**

## ສັງຄາທິເສດສິກຂາບົດທີ ໔

## ວ່າດ້ວຍການຮຽກພິກຂຸນີທີ່ຖືກສົງລົງອຸກເຂປະນີຍະກຳເຂົ້າໝູ່

## ເລື້ອງພິກຂຸນີຈັນທະກາລີ

[໖໙໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຈັນທະກາລີເປັນຜູ້ກໍ່ຄວາມໝາງໃຈ ກໍ່ການຜິດຖຽງ ກໍ່ການວິວາດ ກໍ່ຄວາມອື້ສາວຖົກຖຽງ ກໍ່ອະທິກອນໃນສົງ ເມື່ອສົງຈະລົງໂທດພິກຂຸນີຈັນທະກາລີນັ້ນ ພິກຂຸນີຖຸນລະນັນທາກໍຄັດຄ້ານ ຕໍ່ມາ ພິກຂຸນີຖຸນລະນັນທາເດີນທາງໄປໝູ່ບ້ານດ້ວຍວຽກງານບາງຢ່າງ ຄັ້ງນັ້ນ ພິກຂຸນີສົງຮູ້ວ່າ "ພິກຂຸນີຖຸລະນັນທາຈາກໄປແລ້ວ" ຈຶ່ງລົງອຸກເຂປະນີຍະກຳພິກຂຸນີຈັນທະກາລີຍ້ອນບໍ່ເຫັນອາບັດ ເມື່ອພິກຂຸນີຖຸນລະນັນທາເຮັດວຽກງານໃນໝູ່ບ້ານສຳເລັດແລ້ວກັບມາໃນເມືອງສາວັດຖີ ເມື່ອພິກຂຸນີຖຸນລະນັນທາກຳລັງມາພິກຂຸນີຈັນທະກາລີບໍ່ປູອາສະນະ ບໍ່ຕັ້ງນ້ຳລ້າງຕີນ ຕັ່ງ ເກີບ ກະເບື້ອງເຊັດຕີນ ບໍ່ລຸກຮັບບາດ ແລະ ຈີວອນ ບໍ່ເອົານ້ຳດື່ມຕ້ອນຮັບ ພິກຂຸນີຖຸນລະນັນທາໄດ້ກ່າວກັບພິກຂຸນີຈັນທະກາລີນັ້ນດັ່ງນີ້ວ່າ "ເມື່ອເຫັນເຮົາມາ ເປັນຫຍັງ ທ່ານຈຶ່ງບໍ່ປູອາສະນະ ບໍ່ຕັ້ງນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ບໍ່ລຸກຮັບບາດ ແລະ ຈີວອນ ບໍ່ເອົານ້ຳດື່ມຕ້ອນຮັບເຮົານໍ?"

ພິກຂຸນີຈັນທະກາລີຕອບວ່າ "ແມ່ເຈົ້າ ຄົນບໍ່ມີທີ່ເພິ່ງກໍເຮັດຢ່າງນີ້ແລ້ວ"

ພິກຂຸນີຖຸນລະນັນທາຖາມວ່າ "ຍ້ອນຫຍັງ ທ່ານຈຶ່ງບໍ່ມີທີ່ເພິ່ງ"

ພິກຂຸນີຈັນທະກາລີຕອບວ່າ "ແມ່ເຈົ້າ ພິກຂຸນີເຫຼົ່ານີ້ເຂົ້າໃຈວ່າ ເຮົາເປັນຄົນບໍ່ມີທີ່ເພິ່ງ ບໍ່ມີຊື່ສຽງ ບໍ່ມີໃຜຖ້າກ່າວປົກປ້ອງ ຈຶ່ງລົງອຸກເຂປະນີຍະກຳເຮົາຍ້ອນບໍ່ເຫັນອາບັດ"

ພິກຂຸນີຖຸນລະນັນທາກ່າວວ່າ "ພິກຂຸນີພວກນີ້ໂງ່ຈ້າຫຼາຍ ພິກຂຸນີພວກນີ້ບໍ່ສະຫຼາດ ພິກຂຸນີພວກນີ້ບໍ່ຮູ້ຈັກກຳ ໂທດຂອງກຳ ກຳວິບັດ ຫຼື ກຳສົມບັດ ເຮົານີ້ ຮູ້ຈັກກຳແດ່ ໂທດຂອງກຳແດ່ ກຳວິບັດແດ່ ກຳສົມບັດແດ່ ເຮົານີ້ ເພິ່ງເຮັດກຳທີ່ຍັງບໍ່ມີໃຜເຮັດ ຫຼື ຮື້ຟື້ນກຳທີ່ຕັດສິນໄປແລ້ວໄດ້" ຈຶ່ງສັ່ງໃຫ້ປະຊຸມພິກຂຸນີສົງທັນທີ ແລ້ວຮຽກພິກຂຸນີຈັນທະກາລີກັບເຂົ້າໝູ່

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາ ຈຶ່ງຮຽກພິກຂຸນີທີ່ສົງພ້ອມພຽງກັນລົງອຸກເຂປະນີຍະກຳໂດຍທຳ ໂດຍວິໄນ ໂດຍສັດຖຸສາດໃຫ້ກັບເຂົ້າໝູ່ ໂດຍບໍ່ບອກກາຣະກະສົງ ບໍ່ຮູ້ສັນທະຂອງໝູ່ຄະນະແນວນີ້ນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາຮຽກພິກຂຸນີທີ່ສົງພ້ອມພຽງກັນລົງອຸກເຂປະນີຍະກຳໂດຍທຳ ໂດຍວິໄນ ໂດຍສັດຖຸສາດໃຫ້ກັບເຂົ້າໝູ່ໂດຍບໍ່ບອກກາຣະກະສົງ ບໍ່ຮັບຮູ້ສັນທະຂອງຄະນະ ແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາ ຈຶ່ງຮຽກພິກຂຸນີຜູ້ທີ່ສົງພ້ອມພຽງກັນລົງອຸກເຂປະນີຍະກຳ ໂດຍທຳ ໂດຍວິໄນ ໂດຍສັດຖຸສາດໃຫ້ກັບເຂົ້າໝູ່ໂດຍບໍ່ບອກກາຣະກະສົງ ບໍ່ຮູ້ສັນທະຂອງຄະນະນໍ? ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ ເຫຼື້ອມໄສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໓໕] ກໍ ພິກຂຸນີໃດ ຮຽກພິກຂຸນີທີ່ສົງພ້ອມພຽງກັນລົງອຸກເຂປະນີຍະກຳໂດຍທຳ ໂດຍວິໄນ ໂດຍສັດຖຸສາດໃຫ້ກັບເຂົ້າໝູ່ໂດຍບໍ່ບອກກາຣະກະສົງ ບໍ່ຮູ້ສັນທະຂອງຄະນະ ແມ່ນພິກຂຸນີນີ້ ຕ້ອງທຳຄືສັງຄາທິເສດທີ່ຊື່ວ່າ ປະຖະມາປັດຕິກະ ນິດສາຣະນີຍະ

**ເລື້ອງພິກຂຸນີຈັນທະກາລີ ຈົບ**

## ສິກຂາບົດວິພັງ

[໕໔໕] ຄຳວ່າ ກໍ ໗ລ໗ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໗ລ໗ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໗ລ໗ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າ ພິກຂຸນີ ຍ້ອນເປັນຜູ້ຂໍ ໗ລ໗ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ສິ່ງທີ່ຊື່ວ່າ ພ້ອມພຽງກັນ ຄື ມີສັງວາດສະເໝີກັນ ຢູ່ໃນສະມານະສັງວາດສີມາດຽວກັນ

ທີ່ຊື່ວ່າ ທີ່ ໗ລ໗ ລົງອຸກເຂປະນີຍະກຳ ຄື ຖືກສົງລົງໂທດຍ້ອນບໍ່ເຫັນ ຫຼື ບໍ່ເຮັດຄືນອາບັດ ຫຼື ຍ້ອນບໍ່ຍອມສະລະທິດຖິບາບ

ຄຳວ່າ ໂດຍທຳ ໂດຍວິໄນ ຄື ໂດຍທຳໃດ ໂດຍວິໄນໃດ

ຄຳວ່າ ໂດຍສັດຖຸສາດ ຄື ໂດຍຄຳສັ່ງສອນຂອງພຣະຊິນນະເຈົ້າ ໂດຍຄຳສັ່ງສອນຂອງພຣະພຸດທະເຈົ້າ

ຄຳວ່າ ໂດຍບໍ່ບອກ ຄື ບໍ່ບອກສົງຜູ້ເຮັດກຳ

ຄຳວ່າ ບໍ່ຮູ້ສັນທະຂອງຄະນະ ຄື ບໍ່ຮູ້ຄວາມເຫັນດີຂອງຄະນະ

ພິກຂຸນີຄິດວ່າ “ຈະຮຽກເຂົ້າໝູ່” ຈຶ່ງສະແຫວງຫາຄະນະ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໘ ຄັ້ງ ຕ້ອງອາບັດຖຸນລັດໄຈ ຈົບກຳມະວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

ຄຳວ່າ ແມ່ນພິກຂຸນີນີ້ ພຣະຜູ້ມີພຣະພາກເຈົ້າຕັດທຽບຄຽງພິກຂຸນີອົງກ່ອນ ໆ

ຄຳວ່າ ປະຖະມາປັດຕິກະ ຄື ຕ້ອງອາບັດພ້ອມກັບການລ່ວງລະເມີດວັດຖຸໂດຍບໍ່ຕ້ອງສູດສະມະນຸພາດ

ຄຳວ່າ ນິດສາຣະນີຍະ ໄດ້ແກ່ ເຮັດໃຫ້ຖືກຂັບໄລ່ອອກຈາກໝູ່

ຄຳວ່າ ສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ມານັດ ໗ລ໗ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ສັງຄາທິເສດ

## ບົດພາຊະນີ

### ຕິກະສັງຄາທິເສດ

[໕໔໗] ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຮຽກເຂົ້າໝູ່ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ຮຽກເຂົ້າໝູ່ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຮຽກເຂົ້າໝູ່ ຕ້ອງອາບັດສັງຄາທິເສດ

**ຕິກະທຸກກົດ**

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດທຸກກົດ

**ອະນາປັດຕິວານ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໖໙໗] ໑. ພິກຂຸນີ ບອກສົງຜູ້ເຮັດກຳແລ້ວຮຽກກັບເຂົ້າໝູ່
໒. ພິກຂຸນີ ຮຽກກັບເຂົ້າໝູ່ ເມື່ອຮູ້ສັນທະຂອງຄະນະແລ້ວ
໓. ພິກຂຸນີ ຮຽກພິກຂຸນີຜູ້ປະພຶດຂໍ້ວັດກັບເຂົ້າໝູ່
໔. ພິກຂຸນີ ຮຽກກັບເຂົ້າໝູ່ໃນເມື່ອບໍ່ມີການະກະສົງຜູ້ເຮັດກຳ
໕. ພິກຂຸນີ ວິກົນຈະລິດ
໖. ພິກຂຸນີ ຕົ້ນບັນຍັດ

**ສັງຄາທິເສດສິກຂາບົດທີ ໔ ຈົບ**

# ສັງຄາທິເສດສິກຂາບົດທີ ໕

## ວ່າດ້ວຍການຮັບໂພຊະນະຈາກມືຊາຍຜູ້ກຳໜັດ

## ເລື້ອງພິກຂຸນີສຸນທະຣີນັນທາ

[໖໙໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພິກຂຸນີສຸນທະຣີນັນທາມີຮູບງາມ ໜ້າເບິ່ງ ໜ້າຊື່ນຊົມ ຄົນທັງຫຼາຍເຫັນທ່ານຢູ່ໂຮງສັນ ເກີດຄວາມກຳໜັດ ຈຶ່ງຖວາຍອາຫານທີ່ດີ ໆ ແກ່ນາງຜູ້ກຳໜັດ ພິກຂຸນີສຸນທະຣີນັນທາຈຶ່ງໄດ້ສັນຕາມຄວາມຕ້ອງການ ສ່ວນພິກຂຸນີອື່ນ ໆ ບໍ່ໄດ້ສັນຕາມທີ່ຄິດໄວ້

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພິກຂຸນີສຸນທະຣີນັນທາກຳໜັດ ຈຶ່ງຮັບຂອງຫຍໍ້າ ຫຼື ຂອງສັນຈາກມືຊາຍຜູ້ກຳໜັດດ້ວຍມືຂອງຕົນແລ້ວຫຍໍ້າສັນແນວນັ້ນນໍ?” ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີສຸນທະຣີນັນທາກຳໜັດ ຮັບຂອງຫຍ້ຳ ຫຼື ຂອງສັນຈາກມືຊາຍຜູ້ກຳໜັດດ້ວຍມືຂອງຕົນແລ້ວຫຍ້ຳສັນ ແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີສຸນທະຣີນັນທາກຳໜັດ ຈຶ່ງຮັບຂອງຫຍ້ຳ ຫຼື ຂອງສັນຈາກ ມືຊາຍຜູ້ກຳໜັດດ້ວຍມືຂອງຕົນແລ້ວຫຍ້ຳສັນນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໐໐] ກໍ ພິກຂຸນີໃດ ກຳໜັດ ຮັບຂອງຫຍ້ຳ ຫຼື ຂອງສັນ ຈາກມືຊາຍຜູ້ກຳໜັດດ້ວຍມືຂອງຕົນແລ້ວຫຍ້ຳ ຫຼື ສັນ ແມ່ນພິກຂຸນີນີ້ຕ້ອງທຳ ຄື ສັງຄາທິເສດທີ່ຊື່ ປະຖະມາປັດຕິກະ ນິດສາຣະນີຍະ

### ເລື້ອງພິກຂຸນີສຸນທະຣີນັນທາ ຈົບ

## ສິກຂາບົດວິພັງ

[໗໐໑] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າ ພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າ ຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ກຳໜັດ ໄດ້ແກ່ ພິກຂຸນີມີຄວາມຍິນດີ ເພ່ງເລັງ ມີຈິດຮັກແພງ

ທີ່ຊື່ວ່າ ຜູ້ກຳນັດ ໄດ້ແກ່ ຊາຍມີຄວາມຍິນດີ ເພ່ງເລັງ ມີຈິດຮັກແພງ

ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸດຜູ້ຊາຍ ບໍ່ແມ່ນຍັກ ບໍ່ແມ່ນເຜດ ບໍ່ແມ່ນສັດເດຍຣັດສານຕົວຜູ້ ແຕ່ເປັນຊາຍທີ່ຮູ້ດຽງສາ ສາມາດທີ່ຈະກຳໜັດໄດ້

ທີ່ຊື່ວ່າ ຂອງຫຍ້ຳ ຄື ຍົກເວັ້ນໂພຊະນະ ໕ ນ້ຳ ແລະໄມ້ຖູແຂ້ວ ນອກນັ້ນຊື່ວ່າຂອງຫຍ້ຳ

ທີ່ຊື່ວ່າ ຂອງສັນ ໄດ້ແກ່ ໂພຊະນະ ໕ ຄື ເຂົ້າສຸກ ຂະໜົມສົດ ເຂົ້າຕູ ປາ ຊີ້ນ

ພິກຂຸນີຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຫຍ້ຳ ຈະສັນ" ຕ້ອງອາບັດຖຸນລັດໄຈ ສັນ ຕ້ອງອາບັດສັງຄາທິເສດທຸກ ໆ ຄຳກືນ

ຄຳວ່າ ແມ່ນພິກຂຸນີນີ້ ພຣະຜູ້ມີພຣະພາກເຈົ້າຕັດຫຼຽບຫຼຽງພິກຂຸນີອື່ງກ່ອນ ໆ

ຄຳວ່າ ປະຖະມາປັດຕິກະ ຄື ຕ້ອງອາບັດພ້ອມກັບການລ່ວງລະເມີດວັດຖຸໂດຍບໍ່ຕ້ອງສູດສະມະນຸພາດ

ຄຳວ່າ ນິດສາຣະນີຍະ ໄດ້ແກ່ ເຮັດໃຫ້ຖືກຂັບໄລ່ອອກຈາກໝູ່

ຄຳວ່າ ສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ມານັດ ຯລຯ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ສັງຄາທິເສດ

ພິກຂຸນີຮັບປະເຄນນ້ຳ ແລະ ໄມ້ຖູແຂ້ວ ຕ້ອງອາບັດທຸກກົດ ເມື່ອຝ່າຍໜຶ່ງກຳໜັດ ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຫຍໍ້າ ຈະສັນ" ຕ້ອງອາບັດທຸກກົດ

## ບົດພາຊະນີ

[໗໐໘] ສັນ ຕ້ອງອາບັດຖຸນລັດໄຈ ທຸກ ໆ ຄຳກືນ ພິກຂຸນີຮັບປະເຄນນ້ຳ ແລະ ໄມ້ຖູແຂ້ວ ຕ້ອງອາບັດທຸກກົດ

ເມື່ອທັງສອງຝ່າຍຕ່າງກຳໜັດ ຮັບປະເຄນຈາກມືຍັກ ເຜດ ບັນເດາະ ຫຼື ສັດເດຍຣັດສານມີກາຍເປັນມະນຸດ ດ້ວຍຕັ້ງໃຈວ່າ "ຈະຫຍໍ້າ ຈະສັນ" ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດຖຸນລັດໄຈທຸກ ໆ ຄຳກືນ ຮັບປະເຄນນ້ຳ ແລະ ໄມ້ຖູແຂ້ວ ຕ້ອງອາບັດທຸກກົດ

ເມື່ອກຳໜັດຝ່າຍດຽວ ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຫຍໍ້າ ຈະສັນ" ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດທຸກກົດທຸກ ໆ ຄຳກືນ ຮັບປະເຄນນ້ຳ ແລະ ໄມ້ຖູແຂ້ວ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໐໕] ໑. ພິກຂຸນີ ບໍ່ກຳໜັດຮັບຂອງຈາກຊາຍຜູ້ບໍ່ກຳໜັດ

໒. ພິກຂຸນີ ຮູ້ຢູ່ວ່າ "ເຂົາບໍ່ກຳໜັດ" ຈຶ່ງຮັບປະເຄນ

໕. ພິກຂຸນີ ວິກົນຈະລິດ

໔. ພິກຂຸນີ ຕົ້ນບັນຍັດ

**ສັງຄາທິເສດສິກຂາບົດທີ ໕ ຈົບ**

# ສັງຄາທິເສດສິກຂາບົດທີ ໕

## ວ່າດ້ວຍການສົ່ງເສີມພິກຂຸນີໃຫ້ຮັບໂພຊະນະຈາກມືຊາຍຜູ້ກຳໜັດ

## ເລື່ອງພິກຂຸນີສຸນທະຣີນັນທາ

[໗໐໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີສຸນທະຣີນັນທາມີຮູບງາມໜ້າເບິ່ງ ໜ້າຊື່ນຊົມ ຄົນທັງຫຼາຍ ເຫັນພິກຂຸນີສຸນທະຣີນັນທານັ້ນຢູ່ໂຮງສັນເກີດຄວາມກຳໜັດ ຈຶ່ງຖວາຍອາຫານທີ່ດີ ໆ ແກ່ພິກຂຸນີສຸນທະຣີນັນທາ ແຕ່ພິກຂຸນີສຸນທະຣີນັນທາມີຄວາມຢຳເກງບໍ່ຍອມຮັບປະເຄນ ພິກຂຸນີຜູ້ນັ່ງຢູ່ໃກ້ໄດ້ກ່າວກັບພິກຂຸນີສຸນທະຣີນັນທານັ້ນດັ່ງນີ້ວ່າ "ແມ່ເຈົ້າເປັນຫຍັງ ທ່ານຈຶ່ງບໍ່ຮັບປະເຄນ"

ນາງຕອບວ່າ "ແມ່ເຈົ້າ ຍ້ອນພວກເຂົາເປັນຜູ້ກຳໜັດ"
ພິກຂຸນີນັ້ນຖາມວ່າ "ທ່ານກໍກຳໜັດແມ່ນບໍ?"
ນາງຕອບວ່າ "ແມ່ເຈົ້າ ເຮົາບໍ່ກຳໜັດ"

ພິກຂຸນີນັ້ນເວົ້າວ່າ "ແມ່ເຈົ້າ ຊາຍຜູ້ນີ້ຈະກຳໜັດ ຫຼື ບໍ່ກຳໜັດກໍເຮັດຫຍັງທ່ານບໍ່ໄດ້ຍ້ອນທ່ານບໍ່ກຳໜັດ ນິມົນເທີ້ນ ແມ່ເຈົ້າ ຊາຍຜູ້ນີ້ຈະຖວາຍຂອງຫຍ້ຳ ຫຼື ຂອງສັນກໍຕາມ ທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນເອງແລ້ວຫຍ້ຳ ຫຼື ສັນເທີ້ນ"

ບັນດາພິກຂຸນີຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີ ຈຶ່ງໄດ້ກ່າວແນວນີ້ວ່າ ແມ່ເຈົ້າ ຊາຍຜູ້ນີ້ຈະກຳໜັດ ຫຼື ບໍ່ກຳໜັດກໍຕາມກໍເຮັດຫຍັງທ່ານບໍ່ໄດ້ຍ້ອນທ່ານບໍ່ກຳໜັດ ນິມົນເທີ້ນ ແມ່ເຈົ້າ ຊາຍຜູ້ນີ້ຈະຖວາຍສິ່ງໃດ ຈະເປັນຂອງຫຍ້ຳ ຫຼື ຂອງສັນກໍຕາມ ທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນເອງແລ້ວຫຍ້ຳສັນເທີ້ນ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີກ່າວແນວນີ້ວ່າ ແມ່ເຈົ້າ ຊາຍຜູ້ນີ້ຈະກຳໜັດ ຫຼື ບໍ່ກຳໜັດກໍຕາມ ກໍເຮັດຫຍັງທ່ານບໍ່ໄດ້ ຍ້ອນທ່ານບໍ່ກຳໜັດ ນິມົນເທີ້ນແມ່ເຈົ້າ ຊາຍຜູ້ນີ້ຈະຖວາຍສິ່ງໃດ ຈະເປັນຂອງຫຍ້ຳ ຫຼື ຂອງສັນກໍຕາມ ທ່ານຈົ່ງຮັບປະເຄນຂອງນັ້ນ

ດ້ວຍມືຂອງຕົນເອງແລ້ວຫຍ້ຳຫຼືສັນເຫີ້ນ ດັ່ງນີ້ ແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງໄດ້ກ່າວແນວນີ້ວ່າ ແມ່ເຈົ້າ ຊາຍຜູ້ນີ້ຈະກຳໜັດ ຫຼື ບໍ່ກຳໜັດກໍຕາມກໍເຮັດຫຍັງທ່ານບໍ່ໄດ້ ຍ້ອນທ່ານບໍ່ມີຄວາມກຳໜັດ ນິມົນເທີ້ນ ແມ່ເຈົ້າ ຊາຍຜູ້ນີ້ຈະຖວາຍສິ່ງໃດ ຈະເປັນຂອງຫຍ້ຳ ຫຼື ຂອງສັນກໍຕາມ ທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນເອງແລ້ວຫຍ້ຳ ຫຼື ສັນເທີ້ນ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໕] ກໍ ພິກຂຸນີໃດ ກ່າວແນວນີ້ວ່າ "ຊາຍຜູ້ນັ້ນ ຈະກຳໜັດ ຫຼື ບໍ່ກຳໜັດກໍຕາມ ກໍເຮັດຫຍັງທ່ານບໍ່ໄດ້ ຍ້ອນທ່ານບໍ່ກຳໜັດ ນິມົນເທີ້ນ ແມ່ເຈົ້າ ຊາຍຜູ້ນີ້ຈະຖວາຍສິ່ງໃດ ຈະເປັນຂອງຫຍ້ຳຫຼືຂອງສັນກໍຕາມ ທ່ານຈົ່ງຮັບປະເຄນຂອງນັ້ນ ດ້ວຍມືຂອງຕົນເອງແລ້ວຫຍ້ຳ ຫຼື ສັນເທີ້ນ" ດັ່ງນີ້ ແມ່ນພິກຂຸນີນີ້ຕ້ອງທຳ ຄື ສັງຄາທິເສດ ທີ່ຊື່ວ່າ ປະຖະມາປັດຕິກະ ນິດສາຣະນີຍະ

### ເລື້ອງພິກຂຸນີສຸນທະຣີນັນທາ ຈົບ

## ສິກຂາບົດວິພັງ

[໑໐໖] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ກ່າວແນວນີ້ ຄວາມວ່າ ພິກຂຸນີສົ່ງເສີມດ້ວຍກ່າວວ່າ "ແມ່ເຈົ້າ ຊາຍຜູ້ນີ້ ຈະກຳໜັດຫຼືບໍ່ກຳໜັດກໍຕາມກໍເຮັດຫຍັງທ່ານບໍ່ໄດ້ ຍ້ອນທ່ານບໍ່ກຳໜັດ ນິມົນເທີ້ນ ແມ່ເຈົ້າ ຊາຍຜູ້ນີ້ຈະຖວາຍສິ່ງໃດຈະເປັນຂອງຫຍ້ຳ ຫຼື ຂອງສັນກໍຕາມ ທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນເອງແລ້ວຫຍ້ຳ ຫຼື ສັນເທີ້ນ" ຕ້ອງອາບັດທຸກກົດ

ພິກຂຸນີຮັບປະເຄນຕາມຄຳຂອງພິກຂຸນີນັ້ນດ້ວຍຕັ້ງໃຈວ່າ "ຈະຫຍ້ຳ ຈະສັນ" ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດຖຸນລັດໄຈທຸກ ໆ ຄຳກືນ ສັນສຳເລັດແລ້ວ ຕ້ອງອາບັດສັງຄາທິເສດ

ຄຳວ່າ ແມ່ນພິກຂຸນີນີ້ ພຣະຜູ້ມີພຣະພາກເຈົ້າຕັດທຽບຄຽງພິກຂຸນີອົງກ່ອນ ໆ

ຄຳວ່າ ປະຖະມາປັດຕິກະ ຄື ຕ້ອງອາບັດພ້ອມກັບການລ່ວງລະເມີດວັດຖຸໂດຍບໍ່ຕ້ອງສູດສະມະນຸພາດ

ຄຳວ່າ ນິດສາຣະນີຍະ ໄດ້ແກ່ ເຮັດໃຫ້ຖືກຂັບໄລ່ອອກຈາກໝູ່

ຄຳວ່າ ສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ມານັດ ໆລໆ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ສັງຄາທິເສດ

ພິກຂຸນີສົ່ງເສີມດ້ວຍກ່າວວ່າ "ຈົ່ງຮັບປະເຄນນ້ຳ ແລະ ໄມ້ຖູແຂ້ວ" ຕ້ອງອາບັດທຸກກົດ ພິກຂຸນີຮັບປະເຄນຕາມຄຳຂອງພິກຂຸນີນັ້ນດ້ວຍຕັ້ງໃຈວ່າ "ຈະຫຍ້ຳ ຈະສັນ" ຕ້ອງອາບັດທຸກກົດ

## ບົດພາຊະນີ

[໗໐໗] ຝ່າຍໜຶ່ງກຳໜັດ ພິກຂຸນີສົ່ງເສີມດ້ວຍກ່າວວ່າ "ຈົ່ງຫຍ້ຳຂອງຫຍ້ຳ ຫຼື ຈົ່ງສັນຂອງສັນຈາກມືຂອງຍັກ ເຜດ ບັນເດາະ ຫຼື ສັດເດຍຣັດສານທີ່ມີກາຍເປັນມະນຸດ" ຕ້ອງອາບັດທຸກກົດ

ພິກຂຸນີຮັບປະເຄນຕາມຄຳຂອງພິກຂຸນີນັ້ນດ້ວຍຕັ້ງໃຈວ່າ "ຈະຫຍ້ຳ ຈະສັນ" ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດທຸກກົດທຸກ ໆ ຄຳກືນ ເມື່ອສັນສຳເລັດ ຕ້ອງອາບັດຖຸນລັດໄຈ

ພິກຂຸນີສົ່ງເສີມດ້ວຍກ່າວວ່າ "ຈົ່ງຮັບປະເຄນນ້ຳ ແລະ ໄມ້ຖູແຂ້ວ" ຕ້ອງອາບັດທຸກກົດ ພິກຂຸນີຮັບປະເຄນຕາມຄຳຂອງພິກຂຸນີນັ້ນດ້ວຍຕັ້ງໃຈວ່າ "ຈະຫຍ້ຳ ຈະສັນ" ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໐໘] ໑. ພິກຂຸນີ ຮູ້ຢູ່ວ່າ "ຊາຍບໍ່ກຳໜັດ" ຈຶ່ງສົ່ງເສີມ

໒. ພິກຂຸນີ ຮູ້ຢູ່ວ່າ "ນາງໂກດຢູ່ຈຶ່ງບໍ່ຮັບປະເຄນ" ຈຶ່ງສົ່ງເສີມ

໓. ພິກຂຸນີ ຮູ້ຢູ່ວ່າ "ນາງຈະບໍ່ຮັບປະເຄນຍ້ອນຄວາມອີດູຕະກູນ" ຈຶ່ງສົ່ງເສີມ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສັງຄາທິເສດສິກຂາບົດທີ ໖ ຈົບ**

# ສັງຄາທິເສດສິກຂາບົດທີ ໗
## ວ່າດ້ວຍການບອກຄືນພຣະຣັດຕະນະໄຕຣ
## ເລື່ອງພິກຂຸນີຈັນທະກາລີ

[໗໐໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຈັນທະກາລີຜິດຖຽງກັບພິກຂຸນີທັງຫຼາຍ ໂກດ ບໍ່ພໍໃຈ ຈຶ່ງກ່າວແນວນີ້ວ່າ "ເຮົາຂໍບອກລາພຣະພຸດ ຂໍບອກລາພຣະທຳ

ຂໍບອກລາພຣະສົງ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກະຍະທິດາເຫຼົ່ານີ້ເທົ່ານັ້ນບໍ? ແມ່ນສະມະນະຍິງເຫຼົ່າອື່ນທີ່ປະພຶດດີມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພົມມະຈັນໃນສຳນັກສະມະນະຍິງເຫຼົ່ານັ້ນ"

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຈັນທະກາລີໂກດ ບໍ່ພໍໃຈ ແລ້ວຈຶ່ງກ່າວແນວນີ້ວ່າ ເຮົາຂໍບອກລາພຣະພຸດ ຂໍບອກລາພຣະທຳ ຂໍບອກລາພຣະສົງ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກະຍະທິດາເຫຼົ່ານີ້ເທົ່ານັ້ນບໍ? ແມ່ນສະມະນະຍິງເຫຼົ່າອື່ນທີ່ປະພຶດດີມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພົມມະຈັນໃນສຳນັກສະມະນະຍິງເຫຼົ່ານັ້ນດັ່ງນີ້ນໍ?" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຈັນທະກາລີໂກດ ບໍ່ພໍໃຈ ແລ້ວກ່າວແນວນີ້ວ່າ ເຮົາຂໍບອກລາພຣະພຸດ ຂໍບອກລາພຣະທຳ ຂໍບອກລາພຣະສົງ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກະຍະທິດາເຫຼົ່ານີ້ເທົ່ານັ້ນບໍ? ແມ່ນສະມະນະຍິງເຫຼົ່າອື່ນທີ່ປະພຶດດີມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພົມມະຈັນໃນສຳນັກສະມະນະຍິງເຫຼົ່ານັ້ນດັ່ງນີ້ ແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈັນທະກາລີ ຈຶ່ງໂກດ ບໍ່ພໍໃຈເວົ້າແນວນີ້ວ່າ ເຮົາຂໍບອກລາພຣະພຸດ ຂໍບອກລາພຣະທຳ ຂໍບອກລາພຣະສົງ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກະຍະທິດາເຫຼົ່ານີ້ເທົ່ານັ້ນບໍ? ແມ່ນສະມະນະຍິງເຫຼົ່າອື່ນທີ່ປະພຶດດີມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພົມມະຈັນໃນສຳນັກສະມະນະຍິງເຫຼົ່ານັ້ນ ດັ່ງນີ້ນໍ? ພິກຂຸທັງຫຼາຍການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໑໐] ກໍ ພິກຂຸນີໃດ ໂກດ ບໍ່ພໍໃຈ ກ່າວແນວນີ້ວ່າ "ເຮົາຂໍບອກລາພຣະພຸດ ຂໍບອກລາພຣະທຳ ຂໍບອກລາພຣະສົງ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກະຍະທິດາ

ເຫຼົ່ານີ້ເທົ່ານັ້ນບໍ? ແມ່ນສະມະນະຍິງເຫຼົ່າອື່ນທີ່ປະພຶດດີມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພົມມະຈັນໃນສຳນັກສະມະນະຍິງເຫຼົ່ານັ້ນ" ພິກຂຸນີນັ້ນ ອັນພິກຂຸນີທັງຫຼາຍເພິ່ງວ່າກ່າວຕັກເຕືອນແນວນີ້ວ່າ "ແມ່ເຈົ້າ ທ່ານໂກດ ບໍ່ພໍໃຈ ກໍຢ່າໄດ້ກ່າວແນວນີ້ວ່າ ເຮົາຂໍບອກລາພຣະພຸດ ຂໍບອກລາພຣະທຳ ຂໍບອກລາພຣະສົງ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກະຍະທິດາເຫຼົ່ານີ້ເທົ່ານັ້ນບໍ? ແມ່ນສະມະນະຍິງເຫຼົ່າອື່ນທີ່ປະພຶດດີມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພົມມະຈັນໃນສຳນັກສະມະນະຍິງເຫຼົ່ານັ້ນດັ່ງນີ້ ແມ່ເຈົ້າ ທ່ານຈົ່ງຍິນດີເທີ້ນ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ" ພິກຂຸນີນັ້ນ ອັນພິກຂຸນີທັງຫຼາຍວ່າກ່າວຕັກເຕືອນຢູ່ແນວນີ້ ກໍຍັງຍືນຍັນຢູ່ຢ່າງນັ້ນ ພິກຂຸນີນັ້ນອັນພິກຂຸນີທັງຫຼາຍເພິ່ງສູດສະມະນຸພາດຈົນຄົບ ໓ ຄັ້ງເພື່ອໃຫ້ສະລະເລື້ອງນັ້ນ ຖ້າທ່ານກຳລັງຖືກສູດສະມະນຸພາດກວ່າຈະຄົບ ໓ ຄັ້ງ ສະລະເລື້ອງນັ້ນໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ແມ່ນພິກຂຸນີນີ້ຕ້ອງທຳ ຄື ສັງຄາທິເສດ ທີ່ຊື່ວ່າ ຍາວະຕະຕິຍະກະ ນິດສາຣະນີຍະ

### ເລື້ອງພິກຂຸນີຈັນທະກາລີ ຈົບ

## ສິກຂາບົດວິພັງ

[໗໑໑] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າ ພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ໂກດບໍ່ພໍໃຈ ຄື ບໍ່ພໍໃຈ ແຄ້ນໃຈ ເຈັບໃຈ

ຄຳວ່າ ກ່າວແນວນີ້ ຄື ກ່າວວ່າ "ເຮົາຂໍບອກລາພຣະພຸດ ຂໍບອກລາພຣະທຳ ຂໍບອກລາພຣະສົງ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກະຍະທິດາເຫຼົ່ານີ້ເທົ່ານັ້ນບໍ? ແມ່ນສະມະນະຍິງເຫຼົ່າອື່ນທີ່ປະພຶດດີມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພົມມະຈັນໃນສຳນັກສະມະນະຍິງເຫຼົ່ານັ້ນ"

ຄຳວ່າ ພິກຂຸນີນັ້ນ ໄດ້ແກ່ ພິກຂຸນີຜູ້ກ່າວຢ່າງນັ້ນ

ຄຳວ່າ ອັນພິກຂຸນີທັງຫຼາຍ ໄດ້ແກ່ ພິກຂຸນີເຫຼົ່າອື່ນ

ພິກຂຸນີທັງຫຼາຍທີ່ໄດ້ເຫັນໄດ້ຍິນເພິ່ງວ່າກ່າວຕັກເຕືອນວ່າ "ແມ່ເຈົ້າ ທ່ານໂກດ ບໍ່ພໍໃຈ ກໍຢ່າໄດ້ກ່າວແນວນີ້ວ່າ ເຮົາຂໍບອກລາພຣະພຸດ ຂໍບອກລາພຣະທຳ ຂໍບອກລາພຣະສົງ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກະຍະທິດາເຫຼົ່ານີ້ເທົ່ານັ້ນບໍ? ແມ່ນສະມະນະຍິງເຫຼົ່າອື່ນທີ່ປະພຶດດີມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາກໍຍັງມີຢູ່ ເຮົາ

ຈະໄປປະພຶດພົມມະຈັນໃນສຳນັກສະມະນະຍິງເຫຼົ່ານັ້ນ ດັ່ງນີ້ ແມ່ເຈົ້າ ທ່ານຈົ່ງຍິນດີເທີ້ນ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ" ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໒ ເພິ່ງ ວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸນີທັງຫຼາຍໄດ້ຍິນແລ້ວບໍ່ວ່າກ່າວ ຕ້ອງອາບັດທຸກກົດ ພິກຂຸນີນັ້ນອັນພິກຂຸນີທັງຫຼາຍ ເພິ່ງນຳມາທ່າມກາງສົງວ່າກ່າວຕັກເຕືອນວ່າ "ແມ່ເຈົ້າ ທ່ານໂກດ ບໍ່ພໍໃຈ ກໍຢ່າໄດ້ກ່າວແນວນີ້ວ່າ ເຮົາຂໍບອກລາພຣະພຸດ ຂໍບອກລາພຣະທຳ ຂໍບອກລາພຣະສົງ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກະຍະທິດາເຫຼົ່ານີ້ເທົ່ານັ້ນບໍ? ແມ່ນສະມະນະຍິງເຫຼົ່າອື່ນທີ່ປະພຶດດີມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພົມມະຈັນໃນສຳນັກສະມະນະຍິງເຫຼົ່ານັ້ນ ດັ່ງນີ້ ແມ່ເຈົ້າ ທ່ານຈົ່ງຍິນດີເທີ້ນ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍມັກເທີ້ນ" ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໒ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸນີນັ້ນອັນສົງເພິ່ງສູດສະມະນຸພາດ

## ວິທີສູດສະມະນຸພາດແລະກຳມະວາຈາສູດສະມະນຸພາດ

ພິກຂຸທັງຫຼາຍ ກໍສົງເພິ່ງສູດສະມະນຸພາດພິກຂຸນີນັ້ນແນວນີ້ ຄື ພິກຂຸນີຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໗໑໒] "ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸນີຊື່ນີ້ໂກດ ບໍ່ພໍໃຈ ກ່າວແນວນີ້ວ່າ ເຮົາຂໍບອກລາພຣະພຸດ ຂໍບອກລາພຣະທຳ ຂໍບອກລາພຣະສົງ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກະຍະທິດາເຫຼົ່ານີ້ເທົ່ານັ້ນບໍ? ແມ່ນສະມະນະຍິງເຫຼົ່າອື່ນທີ່ປະພຶດດີມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພົມມະຈັນໃນສຳນັກສະມະນະຍິງເຫຼົ່ານັ້ນ ທ່ານບໍ່ຍອມສະລະເລື້ອງນັ້ນ ຖ້າສົງພ້ອມກັນແລ້ວ ເພິ່ງສູດສະມະນຸພາດພິກຂຸນີຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸນີຊື່ນີ້ໂກດ ບໍ່ພໍໃຈ ກ່າວແນວນີ້ວ່າ ເຮົາຂໍບອກລາພຣະພຸດ ຂໍບອກລາພຣະທຳ ຂໍບອກລາພຣະສົງ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກະຍະທິດາເຫຼົ່ານີ້ເທົ່ານັ້ນບໍ? ແມ່ນສະມະນະຍິງເຫຼົ່າອື່ນທີ່ປະພຶດດີມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພົມມະຈັນໃນສຳນັກສະມະນະຍິງເຫຼົ່ານັ້ນ ທ່ານບໍ່ສະລະເລື້ອງນັ້ນ ສົງສູດສະມະນຸພາດພິກຂຸນີຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ແມ່ເຈົ້າອົງໃດເຫັນດ້ວຍກັບການສູດສະມະນຸພາດພິກຂຸນີຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ແມ່ເຈົ້າອົງ

ນັ້ນເພິ່ງນິ່ງ ແມ່ເຈົ້າອີງໃດບໍ່ເຫັນດ້ວຍ ແມ່ເຈົ້າອີງນັ້ນເພິ່ງໂຈດ ຂ້າພະເຈົ້າກ່າວຄວາມນີ້ເປັນຄັ້ງທີ ໔ ຯລຯ ຂ້າພະເຈົ້າກ່າວຄວາມນີ້ເປັນຄັ້ງທີ ໓ ຯລຯ

ພິກຂຸນີນີ້ ສົງສູດສະມະນຸພາດເພື່ອໃຫ້ສະລະເລື້ອງນັ້ນແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໔ ຄັ້ງ ຕ້ອງອາບັດຖຸນລັດໄຈ ຈົບກຳມະວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ ເມື່ອທ່ານຕ້ອງອາບັດສັງຄາທິເສດ ອາບັດທຸກກົດ (ທີ່ຕ້ອງ) ຍ້ອນຍັດຕິ ຖຸນລັດໄຈ (ທີ່ຕ້ອງ) ຍ້ອນກຳມະວາຈາ ໔ ຄັ້ງ ຍ່ອມລະງັບໄປ

ຄຳວ່າ ແມ່ນພິກຂຸນີນີ້ ພຣະຜູ້ມີພຣະພາກເຈົ້າຕັດທຽບຄຽງພິກຂຸນີອື່ງກ່ອນ ໆ

ຄຳວ່າ ຍາວະຕະຕິຍະກະ ຄື ຕ້ອງອາບັດຍ້ອນສູດສະມະນຸພາດຈົບ ໓ ຄັ້ງ ບໍ່ແມ່ນຕ້ອງອາບັດພ້ອມກັບການລ່ວງລະເມີດວັດຖຸ

ຄຳວ່າ ນິດສາຣະນີຍະ ໄດ້ແກ່ ເຮັດໃຫ້ຖືກຂັບໄລ່ອອກຈາກໝູ່

ຄຳວ່າ ສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ມານັດ ຯລຯ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ສັງຄາທິເສດ

## ບົດພາຊະນີ

### ຕິກະສັງຄາທິເສດ

[໗໑໓] ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

### ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າ ເປັນກຳທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໑໔] ໑. ພິກຂຸນີ ຍັງບໍ່ຖືກສູດສະມະນຸພາດ

໔. ພິກຂຸນີ ຍອມສະລະ
໖. ພິກຂຸນີ ວິກົນຈະລິດ
໔. ພິກຂຸນີ ຕົ້ນບັນຍັດ

**ສັງຄາທິເສດສິກຂາບົດທີ ໗ ຈົບ**

## ສັງຄາທິເສດສິກຂາບົດທີ ໘
## ວ່າດ້ວຍພິກຂຸນີໂກດຍ້ອນຖືກຕັດສິນໃຫ້ແພ້ຄະດີໃນອະທິກອນ
## ເລື້ອງພິກຂຸນີຈັນທະກາລີ

[ກ໑໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຈັນທະກາລີຖືກຕັດສິນໃຫ້ແພ້ຄະດີໃນອະທິກອນ ໂກດ ບໍ່ພໍໃຈ ກ່າວແນວນີ້ວ່າ “ພວກພິກຂຸນີລຳອຽງຍ້ອນຮັກ ພວກພິກຂຸນີລຳອຽງຍ້ອນຊັງ ພວກພິກຂຸນີລຳອຽງຍ້ອນຫຼົງ ແລະພວກພິກຂຸນີລຳອຽງຍ້ອນຢ້ານ”

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ແມ່ເຈົ້າຈັນທະກາລີ ເມື່ອຖືກຕັດສິນໃຫ້ແພ້ຄະດີໃນອະທິກອນແລ້ວໂກດ ບໍ່ພໍໃຈ ກ່າວແນວນີ້ວ່າ ພວກພິກຂຸນີລຳອຽງຍ້ອນຮັກ ພວກພິກຂຸນີລຳອຽງຍ້ອນຊັງ ພວກພິກຂຸນີລຳອຽງຍ້ອນຫຼົງ ແລະ ພວກພິກຂຸນີລຳອຽງຍ້ອນຢ້ານແນວນັ້ນບໍ?” ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຈັນທະກາລີຖືກຕັດສິນໃຫ້ແພ້ຄະດີໃນອະທິກອນແລ້ວໂກດ ບໍ່ພໍໃຈ ກ່າວແນວນີ້ວ່າ ພວກພິກຂຸນີລຳອຽງຍ້ອນຮັກ ພວກພິກຂຸນີລຳອຽງຍ້ອນຊັງ ພວກພິກຂຸນີລຳອຽງຍ້ອນຫຼົງ ແລະ ພວກພິກຂຸນີລຳອຽງຍ້ອນຢ້ານ ດັ່ງນີ້ ແມ່ນບໍ?” ພວກພິກຂຸທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈັນທະກາລີເມື່ອຖືກຕັດສິນໃຫ້ແພ້ຄະດີໃນອະທິກອນແລ້ວໂກດ ບໍ່ພໍໃຈ ກ່າວແນວນີ້ວ່າ ພວກພິກຂຸນີ ລຳອຽງຍ້ອນຮັກ ພວກພິກຂຸນີລຳອຽງຍ້ອນຊັງ ພວກພິກຂຸນີລຳອຽງຍ້ອນຫຼົງ ແລະ ພວກພິກຂຸນີລຳອຽງຍ້ອນຢ້ານບໍ? ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໑໖] ກໍ ພິກຂຸນີໃດ ຖືກຕັດສິນໃຫ້ແພ້ຄະດີໃນອະທິກອນແລ້ວ ໂກດ ບໍ່ພໍໃຈ ກ່າວແນວນີ້ວ່າ "ພວກພິກຂຸນີລຳອຽງຍ້ອນຮັກ ພວກພິກຂຸນີລຳອຽງຍ້ອນຊັງ ພວກພິກຂຸນີລຳອຽງຍ້ອນຫຼົງ ແລະພວກພິກຂຸນີລຳອຽງຍ້ອນຢ້ານ" ພິກຂຸນີນັ້ນ ອັນພິກຂຸນີທັງຫຼາຍເພິ່ງວ່າກ່າວຕັກເຕືອນແນວນີ້ວ່າ "ແມ່ເຈົ້າ ທ່ານເມື່ອຖືກຕັດສິນໃຫ້ແພ້ຄະດີໃນອະທິກອນແລ້ວໂກດ ບໍ່ພໍໃຈກໍຢ່າໄດ້ກ່າວແນວນີ້ວ່າ ພວກພິກຂຸນີ ລຳອຽງຍ້ອນຮັກ ພວກພິກຂຸນີລຳອຽງຍ້ອນຊັງ ພວກພິກຂຸນີລຳອຽງຍ້ອນຫຼົງ ແລະພວກພິກຂຸນີລຳອຽງຍ້ອນຢ້ານ ແມ່ເຈົ້າເອງກໍຍັງລຳອຽງຍ້ອນຮັກແດ່ ລຳອຽງຍ້ອນຊັງແດ່ ລຳອຽງຍ້ອນຫຼົງແດ່ ລຳອຽງຍ້ອນຢ້ານແດ່" ພິກຂຸນີນັ້ນ ອັນພິກຂຸນີທັງຫຼາຍວ່າກ່າວຕັກເຕືອນຢູ່ແນວນີ້ກໍຍັງຢືນຢັນຢູ່ຢ່າງນັ້ນ ພິກຂຸນີນັ້ນ ອັນພິກຂຸນີທັງຫຼາຍເພິ່ງສູດສະມະນຸພາດຈົນຄົບ ໓ ຄັ້ງເພື່ອໃຫ້ສະລະເລື້ອງນັ້ນ ຖ້າທ່ານກຳລັງຖືກສູດສະມະນຸພາດກວ່າຈະຄົບ ໓ ຄັ້ງສະລະເລື້ອງນັ້ນໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ແມ່ນພິກຂຸນີນີ້ ກໍຕ້ອງທຳ ຄື ສັງຄາທິເສດທີ່ຊື່ວ່າ ຍາວະຕະຕິຍະກະ ນິດສາຣະນີຍະ

### ເລື້ອງພິກຂຸນີຈັນທະກາລີ ຈົບ

## ສິກຂາບົດວິພັງ

[໗໑໗] ຄຳວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໆລໆ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າ ພິກຂຸນີ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ໃນອະທິກອນໜຶ່ງ ຄື ທີ່ຊື່ວ່າ ອະທິກອນ ໄດ້ແກ່ ອະທິກອນ ໔ ຢ່າງ[໑] ຄື (໑) ວິວາທາທິກອນ (໒) ອະນຸວາທາທິກອນ (໓) ອາປັດຕາທິກອນ (໔) ກິດຈາທິກອນ

ທີ່ຊື່ວ່າ ຖືກຕັດສິນໃຫ້ແພ້ຄະດີ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຜູ້ແພ້ຄະດີຄວາມ

ຄຳວ່າ ໂກດບໍ່ພໍໃຈ ຄື ບໍ່ພໍໃຈ ແຄ້ນໃຈ ເຈັບໃຈ

ຄຳວ່າ ກ່າວແນວນີ້ ຄື ກ່າວວ່າ ພວກພິກຂຸນີລຳອຽງຍ້ອນຮັກ ໆລໆ ແລະພວກພິກຂຸນີລຳອຽງຍ້ອນຢ້ານ

ຄຳວ່າ ພິກຂຸນີນັ້ນ ຄື ພິກຂຸນີຜູ້ກ່າວຢ່າງນັ້ນ

ຄຳວ່າ ອັນພິກຂຸນີທັງຫຼາຍ ຄື ອັນພິກຂຸນີເຫຼົ່າອື່ນ

ພິກຂຸນີທັງຫຼາຍ ທີ່ໄດ້ເຫັນໄດ້ຍິນເພິ່ງວ່າກ່າວຕັກເຕືອນວ່າ "ແມ່ເຈົ້າ ທ່ານຖືກຕັດສິນໃຫ້ແພ້ຄະດີໃນອະທິກອນໜຶ່ງແລ້ວ ໂກດ ບໍ່ພໍໃຈ ກໍຢ່າໄດ້ກ່າວແນວນີ້ວ່າ ພວກພິກຂຸນີ ລຳອຽງ

ຍ້ອນຮັກ ຯລຯ ແລະພວກພິກຂຸລຳອຽງຍ້ອນຍ້ານ ແມ່ເຈົ້າເອງກໍຍັງລຳອຽງຍ້ອນຮັກແດ່ ຯລຯ ລຳອຽງຍ້ອນຍ້ານແດ່" ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໒ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸນີທັງຫຼາຍໄດ້ຍິນແລ້ວບໍ່ຕັກເຕືອນ ຕ້ອງອາບັດທຸກກົດ ພິກຂຸນີນັ້ນ ອັນພິກຂຸນີທັງຫຼາຍ ເພິ່ງພາມາທ່າມກາງສົງແລ້ວວ່າກ່າວຕັກເຕືອນວ່າ "ແມ່ເຈົ້າ ທ່ານ ເມື່ອຖືກຕັດສິນໃຫ້ແພ້ຄະດີໃນອະທິກອນໜຶ່ງແລ້ວ ໂກດ ບໍ່ພໍໃຈ ກໍຢ່າໄດ້ກ່າວແບບນີ້ວ່າ ພວກພິກຂຸນີລຳອຽງຍ້ອນຮັກ ຯລຯ ແລະພວກພິກຂຸນີລຳອຽງຍ້ອນຍ້ານດັ່ງນີ້ ແມ່ເຈົ້າເອງກໍຍັງລຳອຽງຍ້ອນຮັກແດ່ ຯລຯ ລຳອຽງຍ້ອນຍ້ານແດ່" ເພິ່ງວ່າກ່າວ ຕັກເຕືອນທ່ານແມ່ນຄັ້ງທີ ໒ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນ ການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸນີນັ້ນອັນສົງເພິ່ງສູດສະມະນຸພາດ

## ວິທີສູດສະມະນຸພາດແລະກຳມະວາຈາສູດສະມະນຸພາດ

ພິກຂຸທັງຫຼາຍ ກໍສົງເພິ່ງສູດສະມະນຸພາດພິກຂຸນີນັ້ນແບບນີ້ ຄື ພິກຂຸນີຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[ກ໑໗] ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸນີຊື່ນີ້ຖືກຕັດສິນໃຫ້ແພ້ຄະດີໃນອະທິກອນແລ້ວ ໂກດ ບໍ່ພໍໃຈ ຈຶ່ງກ່າວແບບນີ້ວ່າ ພວກພິກຂຸນີລຳອຽງຍ້ອນຮັກ ຯລຯ ແລະພວກພິກຂຸນີລຳອຽງຍ້ອນຍ້ານ" ທ່ານບໍ່ສະລະເລື້ອງນັ້ນ ຖ້າສົງພ້ອມກັນແລ້ວເພິ່ງສູດສະມະນຸພາດພິກຂຸນີຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸນີຊື່ນີ້ຖືກຕັດສິນໃຫ້ແພ້ຄະດີໃນອະທິກອນເລື້ອງໜຶ່ງ ໂກດ ບໍ່ພໍໃຈ ຈຶ່ງກ່າວແບບນີ້ວ່າ ພວກພິກຂຸນີລຳອຽງຍ້ອນຮັກ ຯລຯ ແລະພວກພິກຂຸນີລຳອຽງຍ້ອນຍ້ານ ທ່ານບໍ່ສະລະເລື້ອງນັ້ນ ສົງສູດສະມະນຸພາດພິກຂຸນີຊື່ນີ້ ເພື່ອໃຫ້ສະລະເລື້ອງນັ້ນ ແມ່ເຈົ້າອົງໃດເຫັນດ້ວຍກັບການສູດສະມະນຸພາດພິກຂຸນີຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງໂຈດ

ເຮົາກ່າວຄວາມນີ້ແມ່ນຄັ້ງທີ ໒ ຯລຯ
ເຮົາກ່າວຄວາມນີ້ແມ່ນຄັ້ງທີ ໓ ຯລຯ

ພິກຂຸນີຊື່ນີ້ ສົງສູດສະມະນຸພາດແລ້ວ ເພື່ອໃຫ້ສະລະເລື້ອງນັ້ນ ສົງເຫັນດ້ວຍ ຍ້ອນແບບນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບບນີ້

ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ ຈົບກຳມະວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ ເມື່ອທ່ານຕ້ອງອາບັດສັງຄາທິເສດ ອາບັດທຸກກົດ (ທີ່ຕ້ອງ) ຍ້ອນຍັດຕິ ອາບັດຖຸນລັດໄຈ (ທີ່ຕ້ອງ) ຍ້ອນກຳມະວາຈາ ໒ ຄັ້ງ ຍ່ອມລະງັບໄປ

ຄຳວ່າ ພິກຂຸນີແມ່ນນີ້ ພຣະຜູ້ມີພຣະພາກເຈົ້າຕັດຫຼຸບຄຽງພິກຂຸນີອົງກ່ອນ ໆ

ຄຳວ່າ ຍາວະຕະຕິຍະກະ ຄື ຕ້ອງອາບັດຍ້ອນສູດສະມະນຸພາດຈົບ ໓ ຄັ້ງ ບໍ່ແມ່ນຕ້ອງອາບັດພ້ອມກັບການລ່ວງລະເມີດວັດຖຸ

ຄຳວ່າ ນິດສາຣະນີຍະ ໄດ້ແກ່ ເຮັດໃຫ້ຖືກຂັບໄລ່ອອກຈາກໝູ່

ຄຳວ່າ ສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ມານັດ ໗ລ໗ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ສັງຄາທິເສດ

## ບົດພາຊະນີ

### ຕິກະສັງຄາທິເສດ

[໗໑໙] ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

### ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໒໐] ໑. ພິກຂຸນີ ຍັງບໍ່ຖືກສົງສູດສະມະນຸພາດ

໒. ພິກຂຸນີ ຜູ້ສະລະ

໓. ພິກຂຸນີ ວິກົນຈະລິດ

໔. ພິກຂຸນີ ຕົ້ນບັນຍັດ

**ສັງຄາທິເສດສິກຂາບົດທີ ໙ ຈົບ**

# ສັງຄາທິເສດສິກຂາບົດທີ ໗

## ວ່າດ້ວຍພິກຂຸນີມີຄວາມປະພຶດຊົ່ວຊາມ

## ເລື້ອງພິກຂຸນີອັນເຕວາສີນີຂອງພິກຂຸນີຖຸນລະນັນທາ

[໗໔໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີອັນເຕວາສີນີຂອງພິກຂຸນີຖຸນລະນັນທາຢູ່ຄຸກຄີກັນ ມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີ ຈຶ່ງຢູ່ຄຸກຄີກັນ ມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນແນວນັ້ນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນໍາເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີຢູ່ຄຸກຄີກັນ ມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນ ພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ແມ່ນບໍ?" ພວກພິກຂຸທູນຮັບວ່າ"ແມ່ນແລ້ວ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາໜິວ່າ ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກ ພິກຂຸນີຈຶ່ງຢູ່ຄຸກຄີກັນ ມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີ ຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນນໍ ພິກຂຸທັງຫຼາຍ ການກະທໍາແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວ ໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໔໘] ກໍພິກຂຸນີທັງຫຼາຍຢູ່ຄຸກຄີກັນ ມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ພິກຂຸນີເຫຼົ່ານັ້ນອັນພິກຂຸນີທັງຫຼາຍເພິ່ງວ່າກ່າວຕັກເຕືອນແນວນີ້ວ່າ "ນາງທັງຫຼາຍຢູ່ຄຸກຄີກັນ ມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ນາງທັງຫຼາຍ ພວກທ່ານຈົ່ງແຍກກັນຢູ່ເທີ້ນ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງທັງຫຼາຍເທົ່າ

ນັ້ນ" ພິກຂຸນີເຫຼົ່ານັ້ນອັນພິກຂຸນີທັງຫຼາຍວ່າກ່າວຕັກເຕືອນຢູ່ແບບນີ້ ກໍຍັງຢືນຢັນຢູ່ຢ່າງນັ້ນ ພິກຂຸນີເຫຼົ່ານັ້ນ ອັນພິກຂຸນີທັງຫຼາຍເພິ່ງສູດສະມະນຸພາດຈົນຄົບ ໓ ຄັ້ງເພື່ອໃຫ້ສະລະເລື້ອງນັ້ນ ຖ້າພວກທ່ານກຳລັງຖືກສູດສະມະນຸພາດກວ່າຈະຄົບ ໓ ຄັ້ງສະລະເລື້ອງນັ້ນໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ແມ່ນພິກຂຸນີເຫຼົ່ານີ້ກໍຕ້ອງທຳ ຄື ສັງຄາທິເສດທີ່ຊື່ວ່າຍາວະຕະຕິຍະກະ ນິດສາຣະນີຍະ

## ເລື້ອງພິກຂຸນີອັນເຕວາສິນີຂອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໗໔໓] ຄຳວ່າ ກໍ ພິກຂຸນີທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງມາຕຸຄາມທີ່ອຸປະສົມບົດແລ້ວ

ຄຳວ່າ ຢູ່ຄຸກຄີກັນ ຄື ທີ່ຊື່ວ່າ ຄຸກຄີກັນ ໄດ້ແກ່ ຢູ່ຄຸກຄີກັນທາງກາຍແລະທາງວາຈາທີ່ບໍ່ເໝາະສົມ

ຄຳວ່າ ມີຄວາມປະພຶດຊົ່ວຊາມ ຄື ປະກອບດ້ວຍຄວາມປະພຶດຊົ່ວຊາມ

ຄຳວ່າ ມີກິດຕິສັບໃນທາງເສື່ອມເສຍ ຄື ມີກິດຕິສັບເສື່ອມເສຍຊ່າລືໄປ

ຄຳວ່າ ມີຊື່ສຽງບໍ່ດີ ຄື ລ້ຽງຊີບດ້ວຍມິດສາອາຊີວະຊົ່ວຊາມ

ຄຳວ່າ ມັກບຽດບຽນພິກຂຸນີສົງ ຄື ເມື່ອຖືກສົງເຮັດກຳແກ່ພວກດຽວກັນ ກໍຄັດຄ້ານ

ຄຳວ່າ ປົກປິດໂທດຂອງກັນແລະກັນ ຄື ປົກປິດຄວາມຜິດຂອງກັນແລະກັນໄວ້

ຄຳວ່າ ພິກຂຸນີເຫຼົ່ານັ້ນ ໄດ້ແກ່ ພິກຂຸນີທີ່ຢູ່ຄຸກຄີກັນ

ຄຳວ່າ ອັນພິກຂຸນີທັງຫຼາຍ ໄດ້ແກ່ ອັນພິກຂຸນີເຫຼົ່າອື່ນ

ພິກຂຸນີທັງຫຼາຍ ທີ່ໄດ້ເຫັນໄດ້ຮູ້ເພິ່ງວ່າກ່າວຕັກເຕືອນວ່າ "ນາງທັງຫຼາຍຢູ່ ຄຸກຄີກັນມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ນາງທັງຫຼາຍ ພວກທ່ານ ຈົ່ງແຍກກັນຢູ່ເທີ້ນ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງທັງຫຼາຍເທົ່ານັ້ນ" ເພິ່ງວ່າກ່າວຕັກເຕືອນພວກທ່ານແມ່ນຄັ້ງທີ ໒ ເພິ່ງວ່າກ່າວຕັກເຕືອນພວກທ່ານແມ່ນຄັ້ງທີ ໓ ຖ້າພວກທ່ານສະລະໄດ້ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸນີທັງຫຼາຍໄດ້ຍິນ ແລ້ວບໍ່ວ່າກ່າວຕັກເຕືອນ ຕ້ອງອາບັດທຸກກົດ ພິກຂຸນີເຫຼົ່ານັ້ນ ອັນພິກຂຸນີທັງຫຼາຍເພິ່ງນຳມາທ່າມກາງສົງວ່າກ່າວຕັກເຕືອນວ່າ "ນາງທັງຫຼາຍຢູ່ຄຸກຄີກັນ ມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ນາງທັງຫຼາຍ ພວກທ່ານຈົ່ງແຍກກັນຢູ່ເທີ້ນ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງທັງຫຼາຍເທົ່ານັ້ນ" ເພິ່ງວ່າກ່າວຕັກເຕືອນພວກທ່ານແມ່ນຄັ້ງທີ ໒ ເພິ່ງວ່າກ່າວຕັກເຕືອພວກທ່ານແມ່ນຄັ້ງທີ ໓ ຖ້າພວກທ່ານສະລະໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸນີເຫຼົ່ານັ້ນອັນສົງເພິ່ງສູດສະມະນຸພາດ

## ວິທີສູດສະມະນຸພາດແລະກຳມະວາຈາສູດສະມະນຸພາດ

ພິກຂຸທັງຫຼາຍ ກໍສົງເພິ່ງສູດສະມະນຸພາດພິກຂຸນີເຫຼົ່ານັ້ນແນວນີ້ ຄື ພິກຂຸນີ ຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໗໘໔] ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸນີຊື່ນີ້ແລະຊື່ນີ້ຢູ່ຄຸກຄີກັນ ມີ ຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນ ພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ພວກທ່ານບໍ່ສະລະເລື້ອງນັ້ນ ຖ້າສົງພ້ອມກັນແລ້ວ ເພິ່ງສູດສະມະນຸພາດພິກຂຸນີຊື່ນີ້ແລະຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸນີຊື່ນີ້ແລະຊື່ນີ້ຢູ່ຄຸກຄີກັນ ມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ພວກທ່ານຍັງບໍ່ສະລະເລື້ອງນັ້ນ ສົງສູດສະມະນຸພາດພິກຂຸນີຊື່ນີ້ແລະຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ແມ່ເຈົ້າອົງໃດເຫັນດ້ວຍກັບການສູດ ສະມະນຸພາດພິກຂຸນີຊື່ນີ້ແລະຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດ ບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງໂຈດ

ຂ້າພະເຈົ້າກ່າວຂໍ້ຄວາມນີ້ແມ່ນຄັ້ງທີ ໒ ຯລຯ

ຂ້າພະເຈົ້າກ່າວຂໍ້ຄວາມນີ້ແມ່ນຄັ້ງທີ ໓ ຯລຯ

ພິກຂຸນີຊື່ນີ້ແລະຊື່ນີ້ສົງສູດສະມະນຸພາດເພື່ອໃຫ້ສະລະເລື້ອງນັ້ນ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ ຈົບກຳມະວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ ເມື່ອທ່ານຕ້ອງອາບັດສັງຄາທິເສດ ອາບັດທຸກກົດ (ທີ່ຕ້ອງ) ຍ້ອນຍັດຕິ ອາບັດຖຸນລັດໄຈ (ທີ່ຕ້ອງ) ຍ້ອນກຳມະວາຈາ ໒ ຄັ້ງ ຍ່ອມລະງັບໄປ

ສົງເພິ່ງສູດສະມະນຸພາດພິກຂຸນີ ໒-໓ ອົງ ຄັ້ງດຽວກັນ ບໍ່ເພິ່ງສູດສະມະນຸພາດ ພິກຂຸນີຫຼາຍກວ່ານັ້ນຄັ້ງດຽວກັນ

ຄຳວ່າ ແມ່ນພິກຂຸນີເຫຼົ່ານັ້ນ ພຣະຜູ້ມີພຣະພາກເຈົ້າຕັດທຽບຄຽງພິກຂຸນີອົງກ່ອນ ໆ

ຄຳວ່າ ຍາວະຕະຕິຍະກະ ຄື ຕ້ອງອາບັດຍ້ອນສູດສະມະນຸພາດຈົບ ໓ ຄັ້ງ ບໍ່ແມ່ນຕ້ອງອາບັດພ້ອມກັບການລ່ວງລະເມີດວັດຖຸ

ຄຳວ່າ ນິດສາຣະນີຍະ ໄດ້ແກ່ ເຮັດໃຫ້ຖືກຂັບໄລ່ອອກຈາກໝູ່

ຄຳວ່າ ສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ມານັດ ຯລຯ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ສັງຄາທິເສດ

## ບົດພາຊະນີ

[໑໘໕] ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

## ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໘໖] ໑. ພິກຂຸນີ ຍັງບໍ່ຖືກສູດສະມະນຸພາດ

໒. ພິກຂຸນີ ຜູ້ສະລະ

໓. ພິກຂຸນີ ວິກົນຈະລິດ

໔. ພິກຂຸນີ ມີຈິດຟຸ້ງຊ່ານ

໕. ພິກຂຸນີ ກະສັບກະສ່າຍຍ້ອນເວທະນາ

໖. ພິກຂຸນີ ຕົ້ນບັນຍັດ

**ສັງຄາທິເສດສິກຂາບົດທີ ໙ ຈົບ**

# ສັງຄາທິເສດສິກຂາບົດທີ ໑໐

## ວ່າດ້ວຍການຍຸຍົງສົ່ງເສີມໃຫ້ພິກຂຸນີປະພຶດຊົ່ວຊາມ

## ເລື້ອງພິກຂຸນີຖຸນລະນັນທາ

[໑໘໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາກ່າວກັບ ພິກ

ຊຸນີທັງຫຼາຍຜູ້ຖືກສົງສູດສະມະນຸພາດແລ້ວແນວນີ້ວ່າ "ແມ່ເຈົ້າທັງຫຼາຍ ພວກທ່ານຈົ່ງຢູ່ຄຸກຄີກັນ ເທີ້ນ ຢ່າແຍກກັນຢູ່ ພິກຂຸນີເຫຼົ່າອື່ນຜູ້ມີຄວາມປະພຶດແນວນີ້ ມີກິດຕິສັບແນວນີ້ ມີຊື່ສຽງແນວນີ້ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນກໍມີຢູ່ໃນສົງ ສົງກໍບໍ່ໄດ້ວ່າກ່າວພິກຂຸນີເຫຼົ່າ ນັ້ນເລີຍ ສົງໄດ້ແຕ່ວ່າກ່າວພວກທ່ານເທົ່ານັ້ນດ້ວຍຄວາມດູໝິ່ນດູຖູກ ດ້ວຍຄວາມບໍ່ພໍໃຈ ດ້ວຍ ການຂົ່ມຂູ່ ຍ້ອນພວກທ່ານອ່ອນແອແນວນີ້ວ່າ ນາງທັງຫຼາຍຢູ່ຄຸກຄີກັນ ມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ນາງທັງຫຼາຍ ພວກທ່ານຈົ່ງແຍກກັນຢູ່ເທີ້ນ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງທັງຫຼາຍ ເທົ່ານັ້ນ"

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກ ຂຸນີຖຸນລະນັນທາຈຶ່ງກ່າວກັບພິກຂຸນີທັງຫຼາຍຜູ້ຖືກສົງສູດສະມະນຸພາດແລ້ວແນວນີ້ວ່າ ທ່ານ ທັງຫຼາຍຈົ່ງຢູ່ຄຸກຄີ ຢ່າແຍກກັນຢູ່ ພິກຂຸນີເຫຼົ່າອື່ນ ຯລຯ ກໍມີຢູ່ໃນສົງ ຯລຯ ນາງທັງຫຼາຍ ພວກທ່ານຈົ່ງແຍກກັນຢູ່ເທີ້ນ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງທັງຫຼາຍເທົ່ານັ້ນ ດັ່ງນີ້ບໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປ ຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງ ສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາກ່າວກັບພິກຂຸນີ ທັງຫຼາຍຜູ້ຖືກສົງສູດສະມະນຸພາດແລ້ວແນວນີ້ວ່າ ທ່ານທັງຫຼາຍຈົ່ງຢູ່ຄຸກຄີກັນ ຢ່າແຍກກັນຢູ່ ພິກຂຸນີເຫຼົ່າອື່ນຜູ້ມີຄວາມປະພຶດແນວນີ້ ມີກິດຕິສັບແນວນີ້ ມີຊື່ສຽງແນວນີ້ກໍມີຢູ່ໃນສົງ ສົງກໍບໍ່ໄດ້ ວ່າກ່າວພິກຂຸນີເຫຼົ່ານັ້ນເລີຍ ສົງໄດ້ແຕ່ວ່າ ກ່າວພວກທ່ານເທົ່ານັ້ນດ້ວຍຄວາມດູໝິ່ນດູຖູກ ດ້ວຍ ຄວາມບໍ່ພໍໃຈ ດ້ວຍການຂົ່ມຂູ່ ຍ້ອນພວກທ່ານອ່ອນແອ ຢ່າງນີ້ວ່າ ນາງທັງຫຼາຍຢູ່ຄຸກຄີກັນ ມີ ຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນກັນ ພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ນາງທັງຫຼາຍ ພວກທ່ານຈົ່ງແຍກກັນຢູ່ເທີ້ນ ສົງຍ່ອມສັນເສີນການ ແຍກກັນຢູ່ຂອງນາງທັງຫຼາຍເທົ່ານັ້ນ ດັ່ງນີ້ ແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນ ທາຈຶ່ງບອກພິກຂຸນີທັງຫຼາຍຜູ້ຖືກສົງສູດ ສະມະນຸພາດແລ້ວແນວນີ້ວ່າ ທ່ານທັງຫຼາຍຈົ່ງຢູ່ຄຸກຄີ ຢ່າແຍກກັນຢູ່ ພິກຂຸນີເຫຼົ່າອື່ນ ຯລຯ ກໍມີຢູ່ໃນສົງ ຯລຯ ແມ່ເຈົ້າທັງຫຼາຍ ພວກທ່ານຈົ່ງແຍກ ກັນຢູ່ເທີ້ນ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງທັງຫຼາຍເທົ່ານັ້ນດັ່ງນີ້ບໍ ພິກຂຸທັງຫຼາຍ ການ ກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມ ໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[ກ໘໗] ກໍພິກຂຸນີໃດກ່າວແນວນີ້ວ່າ "ນາງທັງຫຼາຍ ທ່ານທັງຫຼາຍ ຈົ່ງຢູ່ຄຸກຄີກັນ ຢ່າແຍກກັນຢູ່ ພິກຂຸນີເຫຼົ່າອື່ນຜູ້ມີຄວາມປະພຶດແນວນີ້ ມີກິດຕິສັບແນວນີ້ ມີຊື່ສຽງແນວນີ້ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນໄວ້ກໍມີຢູ່ໃນສົງ ສົງກໍບໍ່ໄດ້ວ່າກ່າວພວກທ່ານເລີຍ ສົງໄດ້ແຕ່ວ່າກ່າວພວກທ່ານເທົ່ານັ້ນດ້ວຍຄວາມດູໝິ່ນດູຖູກ ດ້ວຍຄວາມບໍ່ພໍໃຈ ດ້ວຍການຂົ່ມຂູ່ ຍ້ອນພວກທ່ານອ່ອນແອ ຢ່າງນີ້ວ່າ "ນາງທັງຫຼາຍຢູ່ຄຸກຄີກັນ ມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນ ພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ນາງທັງຫຼາຍ ພວກທ່ານຈົ່ງແຍກກັນຢູ່ເຫີ້ນ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງທັງຫຼາຍເທົ່ານັ້ນ" ພິກຂຸນີນັ້ນອັນພິກຂຸນີທັງຫຼາຍເພິ່ງວ່າກ່າວຕັກເຕືອນແນວນີ້ວ່າ "ນາງ ທ່ານຢ່າກ່າວແນວນີ້ວ່າ ນາງທັງຫຼາຍ ທ່ານທັງຫຼາຍຈົ່ງຢູ່ຄຸກຄີກັນ ຢ່າແຍກກັນຢູ່ ພິກຂຸນີແມ່ນເຫຼົ່າອື່ນຜູ້ມີຄວາມປະພຶດແນວນີ້ ມີກິດຕິສັບແນວນີ້ ມີຊື່ສຽງແນວນີ້ ມັກບຽດບຽນພິກຂຸນີສົງ ມັກປົກປິດໂທດກັນໄວ້ກໍມີຢູ່ໃນສົງ ສົງກໍບໍ່ໄດ້ວ່າກ່າວພິກຂຸນີເຫຼົ່ານັ້ນເລີຍ ໄດ້ແຕ່ວ່າກ່າວພວກທ່ານເທົ່ານັ້ນດ້ວຍຄວາມດູໝິ່ນດູຖູກ ດ້ວຍຄວາມບໍ່ພໍໃຈ ດ້ວຍການຂົ່ມຂູ່ ຍ້ອນພວກທ່ານອ່ອນແອ ຢ່າງນີ້ວ່າ ນາງທັງຫຼາຍຢູ່ຄຸກຄີກັນ ມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ນາງທັງຫຼາຍ ພວກທ່ານຈົ່ງແຍກກັນຢູ່ເຫີ້ນ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງທັງຫຼາຍເທົ່ານັ້ນ" ພິກຂຸນີນັ້ນອັນພິກຂຸນີທັງຫຼາຍວ່າກ່າວຕັກເຕືອນຢູ່ແນວນີ້ ກໍຍັງຢືນຢັນຢູ່ຢ່າງນັ້ນ ພິກຂຸນີນັ້ນອັນພິກຂຸນີທັງຫຼາຍເພິ່ງສູດສະມະນຸພາດຈົນຄົບ ໓ ຄັ້ງເພື່ອໃຫ້ສະລະເລື້ອງນັ້ນ ຖ້າທ່ານກຳລັງຖືກສູດສະມະນຸພາດກວ່າຈະຄົບ ໓ ຄັ້ງສະລະເລື້ອງນັ້ນໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ແມ່ນພິກຂຸນີນີ້ ກໍຕ້ອງທຳຄືສັງຄາທິເສດທີ່ຊື່ວ່າ ຍາວະຕະຕິຍະກະ ນິດສາຣະນີຍະ

**ເລື້ອງພິກຂຸນີຖຸນລະນັນທາ ຈົບ**

## ສິກຂາບົດວິພັງ

[ກ໘໙] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ກ່າວແນວນີ້ ຄື ກ່າວວ່າ "ແມ່ເຈົ້າທັງຫຼາຍ ທ່ານທັງຫຼາຍຈົ່ງຢູ່

ຄຸກຄີກັນ ຢ່າແຍກກັນຢູ່ ພິກຂຸນີເຫຼົ່າອື່ນທີ່ມີຄວາມປະພຶດແບບນີ້ ມີກິດຕິສັບແບບນີ້ ມີຊື່ສຽງແບບນີ້ ມັກບຽດບຽນພິກຂຸນີສົງ ມັກປົກປິດໂທດກັນໄວ້ກໍມີຢູ່ໃນສົງ ສົງບໍ່ວ່າກ່າວອັນໃດ ໆ ພິກຂຸນີເຫຼົ່ານັ້ນ"

ຄຳວ່າ ສົງ ຯລຯ ວ່າກ່າວພວກທ່ານ ຯລຯ ດ້ວຍຄວາມດູໝິ່ນ ໄດ້ແກ່ດ້ວຍຄວາມດູຖູກ
ຄຳວ່າ ດູຖູກ ໄດ້ແກ່ ຄວາມຫຍາບຄາຍ
ຄຳວ່າ ດ້ວຍຄວາມບໍ່ພໍໃຈ ໄດ້ແກ່ ດ້ວຍຄວາມຄຽດ
ຄຳວ່າ ດ້ວຍການຂົ່ມຂູ່ ໄດ້ແກ່ ດ້ວຍການເຮັດໃຫ້ຢ້ານ
ຄຳວ່າ ຍ້ອນພວກທ່ານອ່ອນແອ ຄື ຍ້ອນຄວາມບໍ່ມີພວກ

ສົງວ່າກ່າວແບບນີ້ວ່າ "ນາງທັງຫຼາຍຢູ່ຄຸກຄີກັນ ມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ທ່ານທັງຫຼາຍຈົ່ງແຍກກັນຢູ່ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງທັງຫຼາຍເທົ່ານັ້ນ"

ຄຳວ່າ ພິກຂຸນີນັ້ນ ໄດ້ແກ່ ພິກຂຸນີຜູ້ມັກເວົ້າເຊັ່ນນັ້ນ
ຄຳວ່າ ອັນພິກຂຸນີທັງຫຼາຍ ໄດ້ແກ່ ອັນພິກຂຸນີພວກອື່ນ

ພິກຂຸນີທັງຫຼາຍ ທີ່ໄດ້ເຫັນໄດ້ຍິນເພິ່ງວ່າກ່າວຕັກເຕືອນວ່າ "ແມ່ເຈົ້າ ທ່ານຢ່າເວົ້າ ຢ່າງນີ້ວ່າ ພວກທ່ານຈົ່ງຢູ່ຄຸກຄີກັນ ຢ່າແຍກກັນ ຯລຯ ທ່ານທັງຫຼາຍຈົ່ງແຍກກັນຢູ່ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງທັງຫຼາຍ" ເພິ່ງວ່າກ່າວຕັກເຕືອນທ່ານ ແມ່ນຄັ້ງທີ ໒ ເພິ່ງວ່າກ່າວຕັກເຕືອນທ່ານ ແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸນີທັງຫຼາຍຮູ້ແຕ່ບໍ່ຕັກເຕືອນ ຕ້ອງອາບັດທຸກກົດ

ພິກຂຸນີນັ້ນ ອັນພິກຂຸນີທັງຫຼາຍເພິ່ງນຳມາທ່າມກາງສົງ ວ່າກ່າວຕັກເຕືອນວ່າ "ແມ່ເຈົ້າ ທ່ານຢ່າກ່າວແບບນີ້ວ່າ ແມ່ເຈົ້າທັງຫຼາຍ ພວກທ່ານຈົ່ງຄຸກຄີກັນ ຢ່າແຍກກັນຢູ່ ຯລຯ ພວກທ່ານຈົ່ງແຍກກັນຢູ່ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງທັງຫຼາຍ ເທົ່ານັ້ນ" ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໒ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸນີນັ້ນ ອັນສົງເພິ່ງສູດສະມະນຸພາດ

## ວິທີສູດສະມະນຸພາດແລະກຳມະວາຈາສູດສະມະນຸພາດ

ພິກຂຸທັງຫຼາຍ ກໍສົງເພິ່ງສູດສະມະນຸພາດພິກຂຸນີນັ້ນແບບນີ້ ຄື ພິກຂຸນີຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໗໖໐] ແມ່ເຈົ້າ ຂໍສົງຈົ່ງຟັງ (?) ພິກຂຸນີຊື່ນີ້ກ່າວກັບພິກຂຸນີທັງຫຼາຍຜູ້ຖືກສົງ ສູດສະມະ

ນຸພາດແລ້ວແນວນີ້ວ່າ ພວກທ່ານຈົ່ງຢູ່ຄຸກຄີກັນ ຢ່າແຍກກັນຢູ່ ພິກຂຸນີເຫຼົ່າອື່ນທີ່ມີຄວາມປະພຶດແນວນີ້ ມີກິດຕິສັບແນວນີ້ ມີຊື່ສຽງແນວນີ້ ມັກບຽດບຽນພິກຂຸນີສົງ ມັກປົກປິດໂທດກັນໄວ້ ກໍມີຢູ່ໃນສົງ ສົງກໍບໍ່ໄດ້ວ່າກ່າວພິກຂຸນີເຫຼົ່ານັ້ນເລີຍ ສົງໄດ້ແຕ່ວ່າກ່າວພວກທ່ານເທົ່ານັ້ນດ້ວຍຄວາມດູໝິ່ນດູຖູກ ດ້ວຍຄວາມບໍ່ພໍໃຈ ດ້ວຍການຂົ່ມຂູ່ ຍ້ອນພວກທ່ານອ່ອນແອ ຢ່າງນີ້ວ່າ ນາງທັງຫຼາຍຢູ່ຄຸກຄີກັນ ມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງໃນທາງບໍ່ດີ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ນາງທັງຫຼາຍ ພວກທ່ານເພິ່ງແຍກກັນຢູ່ເທີ້ນ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງ ທັງຫຼາຍເທົ່ານັ້ນ" ພິກຂຸນີນັ້ນຍັງບໍ່ສະລະເລື້ອງນັ້ນ ຖ້າສົງພ້ອມກັນແລ້ວ ກໍເພິ່ງສູດ ສະມະນຸພາດພິກຂຸນີຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸນີນີ້ກ່າວກັບພິກຂຸນີທັງຫຼາຍ ຜູ້ຖືກສົງສູດສະມະນຸພາດແລ້ວແນວນີ້ວ່າ ພວກທ່ານຈົ່ງຢູ່ຄຸກຄີກັນ ຢ່າແຍກກັນຢູ່ ພິກຂຸນີເຫຼົ່າອື່ນທີ່ມີຄວາມປະພຶດແນວນີ້ ມີກິດຕິສັບແນວນີ້ ມີຊື່ສຽງແນວນີ້ ມັກບຽດບຽນພິກຂຸນີສົງ ມັກປົກປິດໂທດກັນໄວ້ກໍມີໃນສົງ ສົງກໍບໍ່ໄດ້ວ່າກ່າວພວກທ່ານເລີຍ ສົງໄດ້ແຕ່ວ່າກ່າວພວກທ່ານເທົ່ານັ້ນດ້ວຍຄວາມດູໝິ່ນດູຖູກດ້ວຍຄວາມບໍ່ພໍໃຈ ດ້ວຍການຂົ່ມຂູ່ ຍ້ອນພວກທ່ານອ່ອນແອ ຢ່າງນີ້ວ່າ "ນາງທັງຫຼາຍຢູ່ຄຸກຄີກັນ ມີຄວາມປະພຶດຊົ່ວຊາມ ມີກິດຕິສັບໃນທາງເສື່ອມເສຍ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງ ປົກປິດໂທດຂອງກັນແລະກັນ ນາງທັງຫຼາຍ ພວກທ່ານຈົ່ງແຍກກັນຢູ່ເທີ້ນ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງທັງຫຼາຍເທົ່ານັ້ນ" ພິກຂຸນີນັ້ນ ຍັງບໍ່ສະລະເລື້ອງນັ້ນ ສົງສູດສະມະນຸພາດພິກຂຸນີຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ແມ່ເຈົ້າອົງໃດເຫັນດ້ວຍກັບການສູດສະມະນຸພາດພິກຂຸນີຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງທ້ວງ

ຂ້າພະເຈົ້າກ່າວຄວາມນີ້ແມ່ນຄັ້ງທີ ໒ ຯລຯ
ຂ້າພະເຈົ້າກ່າວຄວາມນີ້ແມ່ນຄັ້ງທີ ໓ ຯລຯ

ພິກຂຸນີຊື່ນີ້ ສົງສູດສະມະນຸພາດເພື່ອໃຫ້ສະລະເລື້ອງນັ້ນ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ ຈົບກຳມະວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ ເມື່ອທ່ານຕ້ອງອາບັດສັງຄາທິເສດ ອາບັດທຸກກົດ (ທີ່ຕ້ອງ) ຍ້ອນຍັດຕິ ອາບັດຖຸນລັດໄຈ (ທີ່ຕ້ອງ) ຍ້ອນກຳມະວາຈາ ໒ ຄັ້ງ ຍ່ອມລະງັບໄປ

ຄຳວ່າ ພິກຂຸນີແມ່ນນີ້ ພຣະຜູ້ມີພຣະພາກເຈົ້າຕັດທຽບຄຽງພິກຂຸນີອົງກ່ອນ ໆ

ຄຳວ່າ ຍາວະຕະຕິຍະກະ ຄື ຕ້ອງອາບັດຍ້ອນສູດສະມະນຸພາດຈົບ ໓ ຄັ້ງ ບໍ່ແມ່ນຕ້ອງອາບັດພ້ອມກັບການລ່ວງລະເມີດວັດຖຸ

ຄຳວ່າ ນິດສາຣະນີຍະ ໄດ້ແກ່ ເຮັດໃຫ້ຖືກຂັບໄລ່ອອກຈາກໝູ່

ຄຳວ່າ ສັງຄາທິເສດ ຄວາມວ່າ ສຳລັບອາບັດນັ້ນ ສົງເທົ່ານັ້ນໃຫ້ມານັດ ດຶງເຂົ້າຫາອາບັດເດີມ ຮຽກເຂົ້າໝູ່ ພິກຂຸນີຫຼາຍອົງກໍເຮັດບໍ່ໄດ້ ພິກຂຸນີອົງດຽວກໍເຮັດບໍ່ໄດ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ສັງຄາທິເສດ

ຄຳວ່າ ສັງຄາທິເສດ ນີ້ເປັນການຂະໜານນາມ ເປັນຄຳຮຽກໝວດອາບັດນັ້ນ ໆ ເອງ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ສັງຄາທິເສດ

## ບົດພາຊະນີ

## ຕິກະສັງຄາທິເສດ

[໗໓໑] ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບໍ່ສະລະ ຕ້ອງອາບັດສັງຄາທິເສດ

## ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

## ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໓໒] ໑. ພິກຂຸນີ ຍັງບໍ່ຖືກສູດສະມະນຸພາດ

໒. ພິກຂຸນີ ຜູ້ສະລະ

໓. ພິກຂຸນີ ວິກົນຈະລິດ

໔. ພິກຂຸນີ ຕົ້ນບັນຍັດ

**ສັງຄາທິເສດສິກຂາບົດທີ ໑໐ ຈົບ**

## ບົດສະຫຼຸບ

ແມ່ເຈົ້າທັງຫຼາຍ ທຳຄືສັງຄາທິເສດ ໑໗ ສິກຂາບົດ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ ຄື ໙ ສິກຂາບົດແຮກ ຕ້ອງອາບັດໃນຂະນະທີ່ລ່ວງລະເມີດຢ່າງແນ່ນອນ ໘ ສິກຂາບົດຫຼັງ ຕ້ອງອາບັດເມື່ອສູດສະມະນຸພາດຄົບ ໓ ຄັ້ງ ພິກຂຸນີຕ້ອງອາບັດຂໍ້ໃດຂໍ້ໜຶ່ງແລ້ວຕ້ອງປະພຶດປັກຂະມານັດໃນສົງ ໒ ຝ່າຍ ພິກຂຸນີຜູ້ປະພຶດມານັດແລ້ວ ຖືກສົງຮຽກເຂົ້າໝູ່ໃນສີມາທີ່ມີພິກຂຸນີສົງ ໒໐ ອົງ ຖ້າພິກຂຸນີສົງມີຄະນະ ໒໐ ອົງ ຂາດໄປແມ່ນພຽງ ໑ ອົງ ຮຽກພິກຂຸນີນັ້ນເຂົ້າໝູ່ ພິກຂຸນີນັ້ນບໍ່ເປັນອັນສົງຮຽກເຂົ້າໝູ່ ແລະພິກຂຸນີເຫຼົ່ານັ້ນ ຄວນຖືກຕຳໜິ ນີ້ເປັນການເຮັດທີ່ສົມຄວນໃນກຳນັ້ນ

ຂ້າພະເຈົ້າຂໍຖາມແມ່ເຈົ້າທັງຫຼາຍ ໃນທຳຄືສັງຄາທິເສດ ໑໗ ສິກຂາບົດເຫຼົ່ານັ້ນວ່າ"ທ່ານທັງຫຼາຍບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ທ່ານທັງຫຼາຍບໍລິສຸດແລ້ວບໍ?"

ແມ່ເຈົ້າທັງຫຼາຍຜູ້ບໍລິສຸດແລ້ວໃນທຳຄືສັງຄາທິເສດ ໑໗ ສິກຂາບົດນີ້ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

**ສັງຄາທິເສດ ໑໗ ສິກຂາບົດ ຈົບ**

**ສັງຄາທິເສດກັນໃນພິກຂຸນີວິພັງ ຈົບ**

# ໓. ນິດສັກຄິຍະກັນ

ແມ່ເຈົ້າທັງຫຼາຍ ທຳຄືນິດສັກຄິຍະປາຈິດຕີ ໓໐ ສິກຂາບົດເຫຼົ່ານີ້ມາສູ່ວາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບ

# ໑. ປັດຕະວັກ

## ໝວດວ່າດ້ວຍບາດ

## ສິກຂາບົດທີ ໑

## ວ່າດ້ວຍການສະສົມບາດ

## ເລື່ອງພິກຂຸນີສັບພັກຄີ

[໗໓໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີສັບພັກຄີກະທຳການສະສົມບາດໄວ້ເປັນຈຳນວນຫຼາຍ ພວກຊາວບ້ານຍ່າງທ່ຽວຕາມວິຫານເຫັນເຂົ້າຈຶ່ງຕຳໜິ ປະນາມໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງກະທຳການສະສົມບາດໄວ້ເປັນຈຳນວນຫຼາຍໄວ້ຂາຍບາດ ຫຼື ຕັ້ງຮ້ານຂາຍພາຊະນະດິນເຜົາແນວນີ້ບໍ?"

ພິກຂຸນີທັງຫຼາຍໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີສັບພັກຄີ ຈຶ່ງກະທຳການສະສົມບາດບໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີກະທຳການສະສົມບາດແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີສັບພັກຄີຈຶ່ງກະທຳການສະສົມບາດບໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໓໔] ກໍພິກຂຸນີໃດກະທໍາການສະສົມບາດ ຕ້ອງອາບັດນິດສັກຄິຍະປາຈິດຕິ

### ເລື້ອງພິກຂຸນີສັບພັກຄີ ຈົບ

## ສິກຂາບົດວິພັງ

[໗໓໕] ຄໍາວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄໍາວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ບາດ ໄດ້ແກ່ ບາດ ໒ ຊະນິດ ຄື (໑) ບາດເຫຼັກ (໒) ບາດດິນເຜົາ

ບາດມີ ໓ ຂະໜາດ ຄື (໑) ບາດຂະໜາດໃຫຍ່ (໒) ບາດຂະໜາດກາງ (໓) ບາດຂະໜາດນ້ອຍ

ທີ່ຊື່ວ່າ ບາດຂະໜາດໃຫຍ່ ໃສ່ເຂົ້າສຸກຈາກເຂົ້າສານ ໒ ທະນານ ໃສ່ຂອງຫຍໍ້າເສດໜຶ່ງສ່ວນສີ່ ໃສ່ກັບເຂົ້າພໍສົມຄວນແກ່ເຂົ້າສຸກນັ້ນ

ທີ່ຊື່ວ່າ ບາດຂະໜາດກາງ ໃສ່ເຂົ້າສຸກຈາກເຂົ້າສານ ໑ ທະນານ ໃສ່ຂອງຫຍໍ້າເສດໜຶ່ງສ່ວນສີ່ ໃສ່ກັບເຂົ້າພໍສົມຄວນແກ່ເຂົ້າສຸກນັ້ນ

ທີ່ຊື່ວ່າ ບາດຂະໜາດນ້ອຍ ໃສ່ເຂົ້າສຸກຈາກເຂົ້າສານ ເຄິ່ງທະນານ ໃສ່ຂອງຫຍໍ້າເສດໜຶ່ງສ່ວນສີ່ ໃສ່ກັບເຂົ້າພໍສົມຄວນແກ່ເຂົ້າສຸກນັ້ນ

ບາດທີ່ມີຂະໜາດໃຫຍ່ກວ່ານັ້ນເປັນບາດທີ່ໃຊ້ບໍ່ໄດ້ ບາດມີຂະໜາດນ້ອຍກວ່ານັ້ນກໍເປັນບາດທີ່ໃຊ້ບໍ່ໄດ້

ຄໍາວ່າ ກະທໍາການສະສົມ ຄື ບາດທີ່ບໍ່ໄດ້ອະທິຖານ ບໍ່ໄດ້ວິກັບ

ຄໍາວ່າ ບາດເປັນນິດສັກຄີ ຄວາມວ່າ ບາດເປັນນິດສັກຄີພ້ອມກັບອະຣຸນຂຶ້ນ ຄືເປັນຂອງຈໍາຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ພິກຂຸນີອົງໜຶ່ງ

ພິກຂຸທັງຫຼາຍ ກໍພິກຂຸນີເພິ່ງສະລະບາດທີ່ເປັນນິດສັກຄີແບບນີ້

## ວິທີສະລະບາດທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຢໍ້ ປະນົມມື ກ່າວແບບນີ້ວ່າ "ແມ່ເຈົ້າ ບາດໜ່ວຍນີ້ຂອງຂ້ານ້ອຍເກີນກໍານົດຣາຕີ ເປັນນິດສັກຄີ ຂ້ານ້ອຍຂໍສະລະບາດໜ່ວຍນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸນີ ຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນບາດທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາ ວ່າ “ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ບາດໜ່ວຍນີ້ຂອງພິກຂຸນີຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວເພິ່ງຄືນບາດໜ່ວຍນີ້ໃຫ້ແກ່ພິກຂຸນີຊື່ນີ້”

## ສະລະແກ່ຄະນະ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ “ແມ່ເຈົ້າທັງຫຼາຍ ບາດໜ່ວຍນີ້ຂອງຂ້ານ້ອຍເກີນກຳນົດຣາຕີ ເປັນນິດສັກຄີ ຂ້ານ້ອຍຂໍສະລະບາດໜ່ວຍນີ້ແກ່ແມ່ເຈົ້າທັງຫຼາຍ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸນີ ຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນບາດທີ່ທ່ານສະລະໃຫ້ດ້ວຍກ່າວວ່າ “ແມ່ເຈົ້າທັງຫຼາຍຈົ່ງຟັງຂ້າພະເຈົ້າ ບາດໜ່ວຍນີ້ຂອງພິກຂຸນີຊື່ນີ້ເປັນນິດສັກຄີ ທ່ານສະລະແລ້ວແກ່ແມ່ເຈົ້າທັງຫຼາຍ ຖ້າແມ່ເຈົ້າທັງຫຼາຍພ້ອມກັນແລ້ວເພິ່ງຄືນບາດໜ່ວຍນີ້ໃຫ້ແກ່ພິກຂຸນີຊື່ນີ້”

## ສະລະແກ່ບຸກຄົນ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ “ແມ່ເຈົ້າ ບາດໜ່ວຍນີ້ຂອງຂ້ານ້ອຍເກີນກຳນົດຣາຕີ ເປັນນິດສັກຄີ ຂ້ານ້ອຍຂໍສະລະບາດນີ້ແກ່ແມ່ເຈົ້າ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸນີຜູ້ຮັບສະລະນັ້ນເພິ່ງຮັບອາບັດ ແລ້ວຄືນບາດທີ່ທ່ານສະລະໃຫ້ດ້ວຍການກ່າວວ່າ “ຂ້ານ້ອຍຄືນບາດນີ້ໃຫ້ແກ່ແມ່ເຈົ້າ”

## ບົດພາຊະນີ

## ນິດສັກຄິຍະປາຈິດຕີ

[໗໖໖] ບາດທີ່ເກີນກຳນົດຣາຕີ ພິກຂຸນີສຳຄັນວ່າເກີນກຳນົດແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດທີ່ເກີນກຳນົດຣາຕີ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດນິດສັກຄິຍະປາຈິດຕີ
ບາດທີ່ເກີນກຳນົດຣາຕີ ພິກຂຸນີສຳຄັນວ່າຍັງບໍ່ເກີນ ຕ້ອງອາບັດນິດສັກຄິຍະປາຈິດຕີ
ບາດຍັງບໍ່ໄດ້ອະທິຖານ ພິກຂຸນີສຳຄັນວ່າອະທິຖານແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ
ບາດຍັງບໍ່ໄດ້ວິກັບ ພິກຂຸນີສຳຄັນວ່າວິກັບແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດຍັງບໍ່ໄດ້ສະລະ ພິກຂຸນີສຳຄັນວ່າສະລະແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດຍັງບໍ່ໄດ້ສູນຫາຍ ພິກຂຸນີສຳຄັນວ່າສູນຫາຍແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດຍັງບໍ່ສູນຫາຍ ພິກຂຸນີສຳຄັນວ່າສູນຫາຍແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດຍັງບໍ່ແຕກ ພິກຂຸນີສຳຄັນວ່າແຕກແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

ບາດຍັງບໍ່ຖືກໂຈນຊິງເອົາໄປ ພິກຂຸນີສຳຄັນວ່າຖືກຊິງເອົາໄປແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ຕິກະທຸກກົດ

ບາດທີ່ເປັນນິດສັກຄີ ພິກຂຸນີຍັງບໍ່ສະລະ ໃຊ້ສອຍ ຕ້ອງອາບັດທຸກກົດ

ບາດທີ່ຍັງບໍ່ເກີນກຳນົດຣາຕີ ພິກຂຸນີສຳຄັນວ່າເກີນກຳນົດແລ້ວ ຕ້ອງອາບັດທຸກກົດ

ບາດທີ່ຍັງບໍ່ເກີນກຳນົດຣາຕີ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບາດທີ່ຍັງບໍ່ເກີນກຳນົດຣາຕີ ພິກຂຸນີສຳຄັນວ່າຍັງບໍ່ເກີນກຳນົດ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໘໗] ໑. ພິກຂຸນີ ຜູ້ອະທິຖານພາຍໃນອະຣຸນຂຶ້ນ

໒. ພິກຂຸນີ ຜູ້ວິກັບໄວ້ພາຍໃນອະຣຸນຂຶ້ນ

໓. ພິກຂຸນີ ຜູ້ສະລະໃຫ້ໄປພາຍໃນອະຣຸນຂຶ້ນ

໔. ພິກຂຸນີ ຜູ້ມີບາດສູນຫາຍພາຍໃນອະຣຸນຂຶ້ນ

໕. ພິກຂຸນີ ຜູ້ມີບາດເສຍຫາຍພາຍໃນອະຣຸນຂຶ້ນ

໖. ພິກຂຸນີ ຜູ້ມີບາດແຕກພາຍໃນອະຣຸນຂຶ້ນ

໗. ພິກຂຸນີ ຜູ້ມີບາດຖືກໂຈນຊິງເອົາໄປພາຍໃນອະຣຸນຂຶ້ນ

໘. ພິກຂຸນີ ຜູ້ມີບາດຖືກຖືວິສາສະເອົາໄປພາຍໃນອະຣຸນຂຶ້ນ

໙. ພິກຂຸນີ ຜູ້ວິກົນຈະລິດ

໑໐. ພິກຂຸນີ ຜູ້ຕົ້ນບັນຍັດ

## ເລື້ອງບໍ່ຍອມຄືນບາດໃຫ້ເຈົ້າຂອງເດີມ

ສະໄໝນັ້ນ ພວກພິກຂຸນີສັບພັກຄີບໍ່ຍອມຄືນບາດທີ່ມີຜູ້ສະລະໃຫ້ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະອົງຮັບສັ່ງວ່າ "ພິກຂຸທັງຫຼາຍ ບາດທີ່ພິກຂຸນີສະລະໃຫ້ແລ້ວ ຈະບໍ່ຄືນໃຫ້ບໍ່ໄດ້ ພິກຂຸນີອົງໃດບໍ່ຄືນ ຕ້ອງອາບັດທຸກກົດ"

**ສິກຂາບົດທີ ໑ ຈົບ**

# ໑. ປັດຕະວັກ

## ສິກຂາບົດທີ ໘

### ວ່າດ້ວຍການແຈກອະກາລະຈີວອນ

### ເລື້ອງພິກຂຸນີຖຸນລະນັນທາ

[໗໓໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຫຼາຍອົງຈຳພັນສາໃນ ວັດໃກ້ໝູ່ບ້ານແຫ່ງໜຶ່ງ ມີຂໍ້ວັດປະຕິບັດສົມບູນ ມີອິລິຍາບົດງົດງາມ ແຕ່ມີຜ້າບໍ່ດີ ມີແຕ່ຈີວອນເກົ່າ ໆ ໄດ້ເດີນທາງໄປນະຄອນສາວັດຖີ ອຸປາສົກອຸປາສິກາເຫັນພິກຂຸນີເຫຼົ່ານັ້ນແລ້ວຄິດວ່າ "ພິກຂຸນີເຫຼົ່ານີ້ ມີຂໍ້ວັດປະຕິບັດສົມບູນ ມີອິລິຍາບົດງົດງາມ ແຕ່ມີຜ້າບໍ່ດີ ມີແຕ່ຈີວອນເກົ່າ ໆ ຄົງຖືກໂຈນຊິງເອົາໄປ" ຈຶ່ງພາກັນຖວາຍອະກາລະຈີວອນແກ່ພິກຂຸນີສົງ

ພິກຂຸນີຖຸນລະນັນທາກ່າວວ່າ "ພວກເຮົາການກະຖິນແລ້ວ ຜ້ານີ້ເປັນກາລະຈີວອນ" ແລ້ວອະທິຖານໃຫ້ແຈກກັນ

ອຸປາສົກອຸປາສິກາເຫັນພິກຂຸນີເຫຼົ່ານັ້ນ ໄດ້ກ່າວດັ່ງນີ້ວ່າ "ແມ່ເຈົ້າທັງຫຼາຍໄດ້ຈີວອນແດ່ບໍ?"

ພິກຂຸນີເຫຼົ່ານັ້ນຕອບວ່າ "ຍັງບໍ່ໄດ້ຈີວອນ ແມ່ເຈົ້າຖຸນລະນັນທາກ່າວວ່າ ພວກເຮົາ ການກະຖິນແລ້ວ ຜ້ານີ້ເປັນກາລະຈີວອນ ແລ້ວອະທິຖານໃຫ້ແຈກກັນ"

ອຸປາສົກອຸປາສິກາຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງອະທິຖານອະກາລະຈີວອນເປັນກາລະຈີວອນແລ້ວໃຫ້ແຈກກັນນໍ"

ພິກຂຸນີທັງຫຼາຍ ໄດ້ຍິນອຸປາສົກອຸປາສິກາຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງອະທິຖານອະກາລະຈີວອນເປັນກາລະຈີວອນແລ້ວໃຫ້ແຈກກັນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຣັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາອະທິຖານ ອະກາ

ລະຈີວອນເປັນກາລະຈີວອນແລ້ວໃຫ້ແຈກກັນ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້າ ນ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີ ຖຸນລະນັນທາຈຶ່ງອະທິຖານອະກາລະຈີວອນເປັນກາລະຈີວອນແລ້ວໃຫ້ແຈກກັນນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ ເຫຼື້ອມໄສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

[໗໓໙] ກໍພິກຂຸນີໃດອະທິຖານອະກາລະຈີວອນ ເປັນກາລະຈີວອນແລ້ວໃຫ້ແຈກກັນ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໗໔໐] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະ ພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ອະກາລະຈີວອນ[๑] ໄດ້ແກ່ (໑) ຜ້າທີ່ເກີດຂຶ້ນຕະຫຼອດ ໑໑ ເດືອນໃນເມື່ອບໍ່ໄດ້ ການກະຖິນ (໒) ຜ້າທີ່ເກີດຂຶ້ນຕະຫຼອດ ໗ ເດືອນໃນເມື່ອໄດ້ການກະຖິນແລ້ວ (໓) ແມ່ນຜ້າ ທີ່ ເຂົາຖວາຍເຈາະຈົງໃນການນີ້ຊື່ວ່າ ອະກາລະຈີວອນ

ພິກຂຸນີອະທິຖານອະກາລະຈີວອນເປັນກາລະຈີວອນແລ້ວໃຫ້ແຈກກັນ ຕ້ອງອາບັດທຸກ ກົດໃນຂະນະທີ່ແຈກຈີວອນ ເປັນນິດສັກຄີຍ້ອນໄດ້ມາ ຄືເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະ ນະ ຫຼື ແກ່ພິກຂຸນີອົງໜຶ່ງ

ພິກຂຸທັງຫຼາຍ ພິກຂຸນີເພິ່ງສະລະຈີວອນທີ່ເປັນນິດສັກຄີແນວນີ້

## ວິທີສະລະຈີວອນທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ ແກ່ພັນສາ ນັ່ງຍ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ອະກາລະຈີວອນຜືນນີ້ຂ້ານ້ອຍ

ອະທິຖານເປັນກາລະຈີວອນແລ້ວໃຫ້ແຈກກັນ ເປັນນິດສັກຄີ ຂ້ານ້ອຍຂໍສະລະອະກາລະຈີວອນ ຜືນນີ້ແກ່ສົງ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸນີ ຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນອະກາລະຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກຳ ວາຈາວ່າ “ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ອະກາລະຈີວອນຜືນນີ້ຂອງພິກຂຸນີຊື່ນີ້ ເປັນນິສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວເພິ່ງຄືນອະກາລະຈີວອນຜືນນີ້ໃຫ້ແກ່ພິກຂຸນີຊື່ນີ້”

## ສະລະແກ່ຄະນະ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ “ແມ່ເຈົ້າທັງຫຼາຍ ຯລຯ ຂ້ານ້ອຍຂໍສະລະອະກາລະຈີວອນຜືນນີ້ແກ່ແມ່ເຈົ້າທັງຫຼາຍ” ເມື່ອສະລະແລ້ວເພິ່ງສະແດງອາບັດ ຯລຯ ເພິ່ງຄືນອະກາລະຈີວອນຜືນນີ້ໃຫ້ແກ່ພິກຂຸນີຊື່ນີ້”

## ສະລະແກ່ບຸກຄົນ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ “ແມ່ເຈົ້າ ຯລຯ ຂ້ານ້ອຍຂໍສະລະອະກາລະຈີວອນຜືນນີ້ ແກ່ແມ່ເຈົ້າ” ເມື່ອສະລະແລ້ວເພິ່ງສະແດງອາບັດ ຯລຯ “ຂ້ານ້ອຍຄືນອະກາລະຈີວອນຜືນນີ້ໃຫ້ແກ່ແມ່ເຈົ້າ”

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[໗໔໑] ອະກາລະຈີວອນ ພິກຂຸນີສຳຄັນວ່າເປັນອະກາລະຈີວອນ ອະທິຖານເປັນກາລະຈີວອນແລ້ວໃຫ້ແຈກກັນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ອະກາລະຈີວອນ ພິກຂຸນີບໍ່ແນ່ໃຈ ອະທິຖານເປັນກາລະຈີວອນແລ້ວໃຫ້ແຈກກັນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ອະກາລະຈີວອນ ພິກຂຸນີສຳຄັນວ່າເປັນກາລະຈີວອນ ອະທິຖານເປັນກາລະຈີວອນແລ້ວໃຫ້ແຈກກັນ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກທຸກກົດ

ກາລະຈີວອນ ພິກຂຸນີສຳຄັນວ່າເປັນອະກາລະຈີວອນ ຕ້ອງອາບັດທຸກກົດ

ກາລະຈີວອນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ກາລະຈີວອນ ພິກຂຸນີສຳຄັນວ່າເປັນກາລະຈີວອນ ບໍ່ຕ້ອງອາບັດ

**ອະນາປັດຕິວານ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໔໘] ໑. ພິກຂຸນີ ຜູ້ໃຫ້ແຈກອະກາລະຈີວອນດ້ວຍສຳຄັນວ່າເປັນກາລະຈີວອນ
໒. ພິກຂຸນີ ໃຫ້ແຈກກາລະຈີວອນດ້ວຍສຳຄັນວ່າເປັນກາລະຈີວອນ
໓. ພິກຂຸນີ ວິກົນຈະລິດ
໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໒ ຈົບ**

# ໑. ປັດຕະວັກ

## ສິກຂາບົດທີ ໓

## ວ່າດ້ວຍການແລກປ່ຽນຈີວອນ

## ເລື້ອງພິກຂຸນີຖຸນລະນັນທາ

[໗໔໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາແລກປ່ຽນຈີວອນກັບພິກຂຸນີອົງໜຶ່ງໃຊ້ສອຍ ຄັ້ງນັ້ນ ພິກຂຸນີນັ້ນພັບຈີວອນເກັບໄວ້ ພິກຂຸນີຖຸນລະນັນທາໄດ້ກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ “ຈີວອນທີ່ທ່ານແລກປ່ຽນກັບເຮົາຢູ່ທີ່ໃດ” ພິກຂຸນີນັ້ນ ຈຶ່ງນຳຈີວອນນັ້ນອອກມາໃຫ້ພິກຂຸນີຖຸນລະນັນທາເບິ່ງ

ພິກຂຸນີຖຸນລະນັນທາ ຈຶ່ງກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ “ແມ່ເຈົ້າ ຈີວອນຂອງທ່ານ ຈົ່ງນຳຈີວອນຂອງເຮົາມາ ຈີວອນຂອງທ່ານຕ້ອງເປັນຂອງທ່ານ ຈີວອນຂອງເຮົາຕ້ອງເປັນຂອງເຮົາ ຈົ່ງນຳຈີວອນ ຂອງເຮົາມາ ຈົ່ງຮັບເອົາຈີວອນຂອງທ່ານຄືນໄປເທີ້ນ” ແລ້ວຊີງເອົາຄືນ ລຳດັບນັ້ນພິກຂຸນີນັ້ນ ນຳເລື້ອງໄປບອກພິກຂຸນີທັງຫຼາຍ

ບັນດາພິກຂຸນີຜູ້ມັກໜ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພິກຂຸນີຖຸນລະນັນທາແລກປ່ຽນຈີວອນກັບພິກຂຸນີແລ້ວຈຶ່ງຊີງເອົາຄືນນໍ” ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາແລກປ່ຽນຈີວອນກັບພິກຂຸນີແລ້ວຊິງເອົາຄືນແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາ ຈຶ່ງແລກປ່ຽນຈີວອນກັບພິກຂຸນີແລ້ວຊິງເອົາຄືນນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[ກ໘໔] ກໍພິກຂຸນີໃດ ແລກປ່ຽນຈີວອນກັບພິກຂຸນີ ພາຍຫຼັງພິກຂຸນີນັ້ນກ່າວແບບນີ້ວ່າ "ແມ່ເຈົ້າ ຈີວອນຂອງທ່ານ ຈົ່ງນຳຈີວອນຂອງເຮົາມາ ຈີວອນຂອງທ່ານຕ້ອງເປັນຂອງທ່ານ ຈີວອນຂອງເຮົາຕ້ອງເປັນຂອງເຮົາ ຈົ່ງນຳຈີວອນຂອງເຮົາມາ ຈົ່ງຮັບເອົາຈີວອນຂອງທ່ານຄືນໄປເທີ້ນ" ຊິງຍາດເອົາຄືນ ຫຼື ໃຊ້ໃຫ້ຊິງຍາດເອົາຄືນ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[ກ໘໕] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ກັບພິກຂຸນີ ຄື ກັບພິກຂຸນີອົງອື່ນ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ໖ ຊະນິດ ຢ່າງໃດຢ່າງໜຶ່ງເຊິ່ງມີຂະໜາດພໍທີ່ຈະເຮັດວິກັບໄດ້ເປັນຢ່າງຕ່ຳ

ຄຳວ່າ ແລກປ່ຽນ ຄື ແລກປ່ຽນຈີວອນເນື້ອດີກັບຈີວອນເນື້ອບໍ່ດີ ຫຼື ຈີວອນເນື້ອດີກັບຈີວອນເນື້ອບໍ່ດີ

ຄຳວ່າ ຊິງເອົາຄືນ ຄື ຊິງເອົາຄືນເອງ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຄໍາວ່າ ໃຊ້ໃຫ້ຊິງເອົາຄືນ ຄື ໃຊ້ໃຫ້ຜູ້ອື່ນຊິງ ຕ້ອງອາບັດທຸກກົດ ຜູ້ຮັບຄໍາສັ່ງຄັ້ງດຽວແຕ່ຊິງເອົາຄືນຫຼາຍຄັ້ງ ຈີວອນນັ້ນເປັນນິດສັກຄີ ຄື ເປັນຂອງຈໍາຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ພິກຂຸນີອົງໜຶ່ງ

ພິກຂຸທັງຫຼາຍ ພິກຂຸນີເພິ່ງສະລະຈີວອນທີ່ເປັນນິດສັກຄີແບບນີ້

## ວິທີສະລະຈີວອນທີ່ເປັນນິດສັກຄີ

## ສະລະແກ່ສົງ

ພິກຂຸນີອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຢໍ້ ປະນົມມືກ່າວແບບນີ້ວ່າ "ແມ່ເຈົ້າ ຈີວອນຜືນນີ້ຂ້ານ້ອຍແລກປ່ຽນກັບພິກຂຸນີແລ້ວຊິງເອົາຄືນ ເປັນນິດສັກຄີ ຂ້ານ້ອຍຂໍສະລະຈີວອນຜືນນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸນີຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຈີວອນທີ່ທ່ານສະລະໃຫ້ດ້ວຍຍັດຕິກໍາມະວາຈາ ວ່າ "ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກຂຸນີຊື່ນີ້ເປັນນິສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວເພິ່ງຄືນຈີວອນຜືນນີ້ໃຫ້ແກ່ພິກຂຸນີຊື່ນີ້"

## ສະລະແກ່ຄະນະ

ພິກຂຸນີອົງນັ້ນເພິ່ງເຂົ້າໄປຫາພິກຂຸນີຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຢໍ້ ປະນົມມື ກ່າວແບບນີ້ວ່າ "ແມ່ເຈົ້າທັງຫຼາຍ ຯລຯ ຂ້ານ້ອຍຂໍສະລະຈີວອນຜືນນີ້ແກ່ແມ່ເຈົ້າທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ຯລຯ ເພິ່ງຄືນຈີວອນຜືນນີ້ໃຫ້ແກ່ພິກຂຸນີຊື່ນີ້"

## ສະລະແກ່ບຸກຄົນ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວແບບນີ້ວ່າ "ແມ່ເຈົ້າ ຯລຯ ຂ້ານ້ອຍຂໍສະລະຈີວອນຜືນນີ້ແກ່ແມ່ເຈົ້າ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ຯລຯ "ຂ້ານ້ອຍຄືນຈີວອນຜືນນີ້ໃຫ້ແກ່ແມ່ເຈົ້າ"

## ບົດພາຊະນີ

[໗໘໕] ອຸປະສໍາບັນ ພິກຂຸນີສໍາຄັນວ່າເປັນອຸປະສໍາບັນ ແລກປ່ຽນຈີວອນກັນແລ້ວຊິງເອົາຄືນ ຫຼື ໃຊ້ຜູ້ອື່ນໃຫ້ຊິງເອົາຄືນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ອຸປະສຳບັນ ພິກຂຸນີບໍ່ແນ່ໃຈ ແລກປ່ຽນຈີວອນກັນແລ້ວຊີງເອົາຄືນ ຫຼື ໃຊ້ຜູ້ອື່ນໃຫ້ຊີງເອົາຄືນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ແລກປ່ຽນຈີວອນກັນແລ້ວ ຊີງເອົາຄືນ ຫຼື ໃຊ້ຜູ້ອື່ນໃຫ້ຊີງເອົາຄືນ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກກົດ

ພິກຂຸນີປ່ຽນບໍຣິຂານຢ່າງອື່ນແລ້ວ ຊີງເອົາຄືນ ຫຼື ໃຊ້ຜູ້ອື່ນໃຫ້ຊີງເອົາຄືນ ຕ້ອງອາບັດທຸກກົດ

ພິກຂຸນີປ່ຽນຈີວອນ ຫຼື ບໍຣິຂານຢ່າງອື່ນກັບອະນຸປະສຳບັນແລ້ວ ຊີງເອົາຄືນ ຫຼື ໃຊ້ຄົນອື່ນໃຫ້ຊີງເອົາຄືນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໘໗] ໑. ພິກຂຸນີຜູ້ຮັບແລກປ່ຽນຄືນໃຫ້ເອງ ຫຼື ພິກຂຸນີຜູ້ແລກປ່ຽນຖືເອົາຄືນໂດຍວິສາສະຈາກພິກຂຸນີຜູ້ຮັບແລກປ່ຽນແລ້ວ

໔. ພິກຂຸນີວິກົນຈະລິດ

໖. ພິກຂຸນີຕົ້ນບັນຍັດ

**ສິກຂາບົດທີ ໖ ຈົບ**

# ໑. ປັດຕະວັກ

## ສິກຂາບົດທີ ໔

## ວ່າດ້ວຍການອອກປາກຂໍຂອງຢ່າງໜຶ່ງແລ້ວອອກປາກຂໍຂອງຢ່າງອື່ນ

## ເລື່ອງພິກຂຸນີຖຸນລະນັນທາ

[ກ໔໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາເປັນໄຂ້ຢູ່ ອຸປາສົກຄົນໜຶ່ງເຂົ້າໄປຢາມເຖິງທີ່ຢູ່ຖາມວ່າ “ແມ່ເຈົ້າບໍ່ສະບາຍບໍ? ຈະໃຫ້ເຮົານຳອັນໃດມາຖວາຍ”

ນາງຕອບວ່າ “ເຮົາຕ້ອງການເນີຍໃສ”

ຄັ້ງນັ້ນ ອຸປາສົກນັ້ນ ນຳເນີຍໃສລາຄາ ໑ ກະຫາປະນະມາຈາກເຮືອນຂອງເຈົ້າຂອງຮ້ານຄ້າ ຄົນໜຶ່ງຖວາຍແກ່ພິກຂຸນີຖຸນລະນັນທາ

ພິກຂຸນີຖຸນລະນັນທາກ່າວແນວນີ້ວ່າ “ເຮົາບໍ່ຕ້ອງການເນີຍໃສ ແຕ່ຕ້ອງການນ້ຳມັນ”

ລຳດັບນັ້ນ ອຸປາສົກນັ້ນກັບໄປຫາເຈົ້າຂອງຮ້ານຄ້າຄົນນັ້ນເຖິງທີ່ຮ້ານ ເມື່ອເຖິງແລ້ວໄດ້ກ່າວກັບເຈົ້າຂອງຮ້ານຄ້ານັ້ນດັ່ງນີ້ວ່າ “ແມ່ເຈົ້າບໍ່ຕ້ອງການເນີຍໃສ ແຕ່ຕ້ອງການນ້ຳມັນ ໂຜດຮັບເນີຍໃສຂອງທ່ານຄືນໄປ ໂຜດໃຫ້ນ້ຳມັນແກ່ເຮົາ”

ເຈົ້າຂອງຮ້ານຄ້າຈຶ່ງຕອບວ່າ “ນາຍ ຖ້າເຮົາຮັບຂອງທີ່ຂາຍໄປກັບຄືນອີກ ເມື່ອໃດເຮົາຈຶ່ງຂາຍສິນຄ້າໄດ້ ທ່ານຊື້ເນີຍໃສຕາມລາຄາເນີຍໃສໄປແລ້ວ ທ່ານຈະເອົານ້ຳມັນກໍຈົ່ງນຳເງິນຄ່ານ້ຳມັນມາ”

ຄັ້ງນັ້ນ ອຸປາສົກນັ້ນຕຳໜິ ປະນາມ ໂພນທະນາວ່າ “ພິກຂຸນີຖຸນລະນັນທາອອກປາກຂໍຂອງຢ່າງໜຶ່ງແລ້ວ ເປັນຫຍັງຈຶ່ງອອກປາກຂໍຂອງຢ່າງອື່ນນໍ”

ພິກຂຸນີທັງຫຼາຍໄດ້ຍິນອຸປາສົກຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ແມ່ເຈົ້າຖຸນລະນັນທາອອກປາກຂໍຂອງຢ່າງໜຶ່ງແລ້ວຈຶ່ງຂໍຂອງຢ່າງອື່ນນໍ” ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນັ້ນໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື່ອງນັ້ນໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາອອກປາກຂໍຂອງຢ່າງໜຶ່ງແລ້ວອອກປາກຂໍຂອງອີກຢ່າງໜຶ່ງແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາອອກປາກຂໍຂອງຢ່າງໜຶ່ງແລ້ວ ຈຶ່ງອອກປາກຂໍຂອງຢ່າງອື່ນນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນ ທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໔໙] ກໍພິກຂຸນີໃດ ອອກປາກຂໍຂອງຢ່າງໜຶ່ງແລ້ວອອກປາກຂໍຂອງຢ່າງອື່ນ ຕ້ອງອາບັດນິດສັກຄີຍະປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໗໕໐] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ອອກປາກຂໍຂອງຢ່າງໜຶ່ງແລ້ວ ຄື ອອກປາກຂໍສິ່ງຂອງຢ່າງໃດຢ່າງໜຶ່ງແລ້ວ

ຄຳວ່າ ອອກປາກຂໍຂອງຢ່າງອື່ນ ຄວາມວ່າ ອອກປາກຂໍສິ່ງຂອງຢ່າງອື່ນນອກຈາກທີ່ອອກປາກຂໍໄວ້ກ່ອນນັ້ນ ຕ້ອງອາບັດທຸກກົດໃນຂະນະທີ່ຂໍ ຂອງນັ້ນເປັນນິດສັກຄີຍ້ອນໄດ້ມາ ຄືເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ພິກຂຸນີອົງໜຶ່ງ

ພິກຂຸທັງຫຼາຍ ພິກຂຸນີເພິ່ງສະລະຂອງທີ່ເປັນນິດສັກຄີນັ້ນແນວນີ້

## ວິທີສະລະຂອງທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ຂອງນີ້ຂ້ານ້ອຍອອກປາກຂໍຂອງຢ່າງ

ໜຶ່ງແລ້ວຈຶ່ງອອກປາກຂໍມາ ເປັນນິດສັກຄີ ຂ້ານ້ອຍຂໍສະລະຂອງນີ້ ແກ່ສົງ" ເມື່ອສະລະແລ້ວ ເພິ່ງສະແດງອາບັດ

ພິກຂຸນີ ຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຂອງທີ່ທ່ານສະລະໃຫ້ດ້ວຍຍັດຕິກໍາ ມະວາຈາວ່າ "ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງພິກຂຸນີຊື່ນີ້ເປັນນິດສັກຄີ ທ່ານສະລະ ແກ່ສົງ ຖ້າສົງພ້ອມກັນແລ້ວເພິ່ງຄືນຂອງນີ້ໃຫ້ແກ່ພິກຂຸນີຊື່ນີ້"

## ສະລະແກ່ຄະນະ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບ ຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າທັງຫຼາຍ ຯລຯ ຂ້ານ້ອຍຂໍ ສະລະຂອງນີ້ແກ່ແມ່ເຈົ້າທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ຯລຯ ເພິ່ງຄືນຂອງນີ້ໃຫ້ແກ່ພິກຂຸນີຊື່ນີ້"

## ສະລະແກ່ບຸກຄົນ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງ ຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ຯລຯ ຂ້ານ້ອຍຂໍສະລະຂອງນີ້ແກ່ແມ່ເຈົ້າ" ເມື່ອ ສະລະແລ້ວເພິ່ງສະແດງອາບັດ

ຯລຯ "ຂ້ານ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[ກ໕໑] ຂອງຢ່າງອື່ນ ພິກຂຸນີສໍາຄັນວ່າເປັນຂອງຢ່າງອື່ນ ອອກປາກຂໍຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຂອງຢ່າງອື່ນ ພິກຂຸນີບໍ່ແນ່ໃຈອອກປາກຂໍຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຂອງຢ່າງອື່ນ ພິກຂຸນີສໍາຄັນວ່າບໍ່ແມ່ນຂອງຢ່າງອື່ນ ອອກປາກຂໍຂອງຢ່າງອື່ນ ຕ້ອງອາ ບັດນິດສັກຄິຍະປາຈິດຕີ

## ທຸກະທຸກກົດ

ບໍ່ແມ່ນຂອງຢ່າງອື່ນ ພິກຂຸນີສໍາຄັນວ່າເປັນຂອງຢ່າງອື່ນ ອອກປາກຂໍຂອງທີ່ບໍ່ແມ່ນຂອງ ຢ່າງອື່ນ (ນັ້ນ) ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງຢ່າງອື່ນ ພິກຂຸນີບໍ່ແນ່ໃຈ ອອກປາກຂໍຂອງທີ່ບໍ່ແມ່ນຂອງຢ່າງອື່ນ (ນັ້ນ) ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງຢ່າງອື່ນ ພິກຂຸນີສຳຄັນວ່າບໍ່ແມ່ນຂອງຢ່າງອື່ນ ບໍ່ຕ້ອງອາບັດ

**ອະນາປັດຕິວານ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໕໔] ໑. ພິກຂຸນີ ຜູ້ອອກປາກຂໍຂອງນັ້ນເພີ່ມແລະອອກປາກຂໍຂອງຄູ່ຢ່າງອື່ນ

໔. ພິກຂຸນີ ສະແດງອານິສົງແລ້ວຈຶ່ງຄ່ອຍອອກປາກຂໍ

໓. ພິກຂຸນີ ວິກົນຈະລິດ

໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

# ໑. ປັດຕະວັກ

## ສິກຂາບົດທີ ໕

## ວ່າດ້ວຍການໃຫ້ຊື້ຂອງຢ່າງໜຶ່ງແລ້ວໃຫ້ຊື້ຂອງຢ່າງອື່ນ

## ເລື້ອງພິກຂຸນີຖຸນລະນັນທາ

[໗໕໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາເປັນໄຂ້ ລຳດັບນັ້ນ ອຸປາສົກຄົນໜຶ່ງເຂົ້າໄປຢາມພິກຂຸນີຖຸນລະນັນທາເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບພິກຂຸນີຖຸນລະນັນທາດັ່ງນີ້ວ່າ "ແມ່ເຈົ້າຍັງສະບາຍດີຢູ່ບໍ ຍັງພໍເປັນຢູ່ໄດ້ບໍ?"

ນາງຕອບວ່າ "ທ່ານ ເຮົາບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ແລ້ວ"

ເຂົາປະວາຣະນາວ່າ "ແມ່ເຈົ້າ ຂ້າພະເຈົ້າຝາກກະຫາປະນະໄວ້ທີ່ເຮືອນຂອງເຈົ້າຂອງຮ້ານຄ້າຊື່ນັ້ນ ທ່ານໃຊ້ໃຫ້ຄົນໄປນຳສິ່ງທີ່ຕ້ອງການມາເທີ້ນ ຂ້ານ້ອຍ"

ພິກຂຸນີຖຸນລະນັນທາ ສັ່ງສິກຂະມານາອົງໜຶ່ງວ່າ "ສິກຂະມານາ ທ່ານຈົ່ງໄປນຳນ້ຳມັນລາຄາ ໑ ກະຫາປະນະມາຈາກເຮືອນຂອງເຈົ້າຂອງຮ້ານຄ້າຊື່ນັ້ນ" ລຳດັບນັ້ນ ສິກຂະມານານັ້ນ

ໄປ ນຳນ້ຳມັນລາຄາ ໑ ກະຫາປະນະມາຈາກເຮືອນຂອງເຈົ້າຂອງຮ້ານຄ້ານັ້ນແລ້ວ ໄດ້ຖວາຍແກ່ພິກຂຸນີ ຖຸນລະນັນທາ

ພິກຂຸນີຖຸນລະນັນທາກ່າວແນວນີ້ວ່າ “ເຮົາບໍ່ຕ້ອງການນ້ຳມັນ ແຕ່ຕ້ອງການເນີຍໃສ”

ລຳດັບນັ້ນ ສິກຂະມານານັ້ນ ກັບໄປຫາເຈົ້າຂອງຮ້ານຄ້າຄົນນັ້ນເຖິງທີ່ຮ້ານ ເມື່ອເຖິງແລ້ວໄດ້ກ່າວກັບເຈົ້າຂອງຮ້ານຄ້ານັ້ນດັ່ງນີ້ວ່າ “ແມ່ເຈົ້າບໍ່ຕ້ອງການນ້ຳມັນ ແຕ່ຕ້ອງການເນີຍໃສ ໂຜດຮັບນ້ຳມັນຂອງທ່ານຄືນໄປ ໂຜດໃຫ້ເນີຍໃສແກ່ເຮົາ”

ເຈົ້າຂອງຮ້ານຄ້າຈຶ່ງຕອບວ່າ “ແມ່ເຈົ້າ ຖ້າເຮົາຮັບຂອງທີ່ຂາຍໄປກັບຄືນອີກ ເມື່ອໃດເຮົາຈຶ່ງຈະຂາຍສິນຄ້າໄດ້ ທ່ານຊື້ນ້ຳມັນຕາມລາຄານ້ຳມັນໄປແລ້ວ ທ່ານຈະເອົາເນີຍໃສກໍຈົ່ງນຳເງິນຄ່າເນີຍໃສມາ”

ຄັ້ງນັ້ນ ສິກຂະມານານັ້ນໄດ້ຢືນຮ້ອງໄຫ້ ພິກຂຸນີທັງຫຼາຍຈຶ່ງຖາມວ່າ “ທ່ານຮ້ອງໄຫ້ເປັນຍ້ອນຫຍັງ” ທ່ານຈຶ່ງບອກເລື້ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້

ບັນດາພິກຂຸນີຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ ເປັນຫຍັງ ແມ່ເຈົ້າຖຸນລະນັນທາ ຈຶ່ງສັ່ງໃຫ້ຊື້ຂອງຢ່າງໜຶ່ງແລ້ວໃຫ້ຊື້ຂອງຢ່າງອື່ນແນວນັ້ນນໍ” ເມື່ອແລ້ວພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາສັ່ງໃຫ້ຊື້ຂອງຢ່າງໜຶ່ງແລ້ວສັ່ງໃຫ້ຊື້ຂອງຢ່າງອື່ນ ແມ່ນບໍ?” ພິກຂຸທັງຫຼາຍທູນຮັບວ່າ “ແມ່ນແລ້ວ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ໆລໆ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາສັ່ງໃຫ້ຊື້ຂອງຢ່າງໜຶ່ງແລ້ວສັ່ງໃຫ້ຊື້ຢ່າງອື່ນນໍ ພິກຂຸທັງຫຼາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສ ຍິ່ງຂຶ້ນໄດ້ເລີຍ ໆລໆ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໘໔] ກໍພິກຂຸນີໃດ ສັ່ງໃຫ້ຊື້ຂອງຢ່າງໜຶ່ງແລ້ວສັ່ງໃຫ້ຊື້ຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

**ເລື້ອງພິກຂຸນີຖຸນລະນັນທາ ຈົບ**

## ສິກຂາບົດວິພັງ

[໗໕໕] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ສັ່ງໃຫ້ຊື້ຂອງຢ່າງໜຶ່ງແລ້ວ ຄື ສັ່ງໃຫ້ຊື້ຂອງຢ່າງໃດຢ່າງໜຶ່ງແລ້ວ

ຄຳວ່າ ສັ່ງໃຫ້ຊື້ຂອງຢ່າງອື່ນ ຄວາມວ່າ ສັ່ງໃຫ້ຊື້ຂອງຢ່າງອື່ນນອກຈາກຂອງທີ່ໃຫ້ສັ່ງໃຫ້ຊື້ກ່ອນນັ້ນ ຕ້ອງອາບັດທຸກກົດໃນຂະນະທີ່ສັ່ງໃຫ້ຊື້ ຂອງນັ້ນເປັນນິດສັກຄີຍ້ອນໄດ້ມາ ຄືເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ພິກຂຸນີອົງໜຶ່ງ

ພິກຂຸທັງຫຼາຍ ພິກຂຸນີເພິ່ງສະລະຂອງທີ່ເປັນນິດສັກຄີນັ້ນແນວນີ້

## ວິທີສະລະຂອງທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ “ແມ່ເຈົ້າ ຂອງນີ້ຂ້ານ້ອຍສັ່ງໃຫ້ຊື້ຂອງຢ່າງໜຶ່ງແລ້ວຈຶ່ງສັ່ງໃຫ້ຊື້ມາ ເປັນນິດສັກຄີ ຂ້ານ້ອຍຂໍສະລະຂອງນີ້ແກ່ສົງ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸນີຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຂອງທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາ ວ່າ “ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງພິກຂຸນີຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວເພິ່ງຄືນຂອງນີ້ໃຫ້ແກ່ພິກຂຸນີຊື່ນີ້”

### ສະລະແກ່ຄະນະ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ “ແມ່ເຈົ້າທັງຫຼາຍ ຯລຯ ຂ້ານ້ອຍຂໍສະລະຂອງນີ້ແກ່ແມ່ເຈົ້າທັງຫຼາຍ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ຯລຯ ເພິ່ງຄືນຂອງນີ້ໃຫ້ແກ່ພິກຂຸນີຊື່ນີ້”

## ສະລະແກ່ບຸກຄົນ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ۷ລ۷ ຂ້ານ້ອຍຂໍສະລະຂອງນີ້ແກ່ແມ່ເຈົ້າ" ເມື່ອສະລະແລ້ວເພິ່ງສະແດງອາບັດ

۷ລ۷ "ຂ້ານ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[໗໕໓] ຂອງຢ່າງອື່ນ ພິກຂຸນີສຳຄັນວ່າເປັນຂອງຢ່າງອື່ນ ສັ່ງໃຫ້ຊື້ຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຂອງຢ່າງອື່ນ ພິກຂຸນີບໍ່ແນ່ໃຈ ສັ່ງໃຫ້ຊື້ຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຂອງຢ່າງອື່ນ ພິກຂຸນີສຳຄັນວ່າບໍ່ແມ່ນຂອງຢ່າງອື່ນ ສັ່ງໃຫ້ຊື້ຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກະທຸກກົດ

ບໍ່ແມ່ນຂອງຢ່າງອື່ນ ພິກຂຸນີສຳຄັນວ່າເປັນຂອງຢ່າງອື່ນ ສັ່ງໃຫ້ຊື້ຂອງທີ່ບໍ່ແມ່ນຢ່າງອື່ນ ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງຢ່າງອື່ນ ພິກຂຸນີບໍ່ແນ່ໃຈ ສັ່ງໃຫ້ຊື້ຂອງທີ່ບໍ່ແມ່ນຢ່າງອື່ນ ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງຢ່າງອື່ນ ພິກຂຸນີສຳຄັນວ່າບໍ່ແມ່ນຂອງຢ່າງອື່ນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໕໗] ໑. ພິກຂຸນີ ສັ່ງໃຫ້ຊື້ຂອງນັ້ນເພີ່ມແລະສັ່ງໃຫ້ຊື້ຂອງຄູ່ຢ່າງອື່ນ

໒. ພິກຂຸນີ ສະແດງອານິສົງແລ້ວສັ່ງໃຫ້ຊື້

໓. ພິກຂຸນີ ວິກົນຈະລິດ

໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໕ ຈົບ**

# ໑. ປັດຕະວັກ

## ສິກຂາບົດທີ ໖

## ວ່າດ້ວຍການແລກປ່ຽນບໍຣິຂານທີ່ເຂົາຖວາຍສົງຂໍ້ທີ ໑

## ເລື້ອງພິກຂຸນີຫຼາຍອົງ

[໗໕໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ອຸປາສົກ ແລະອຸປາສິກາລວບລວມ ບໍຣິຂານທີ່ເຂົາໃຫ້ດ້ວຍຄວາມພໍໃຈເພື່ອຄ່າຈີວອນຖວາຍພິກຂຸນີສົງແລ້ວຝາກໄວ້ທີ່ເຮືອນຂອງຄົນຂາຍຜ້າຄົນໜຶ່ງແລ້ວເຂົ້າໄປຫາພິກຂຸນີທັງຫຼາຍ ໄດ້ກ່າວດັ່ງນີ້ວ່າ "ແມ່ເຈົ້າ ພວກເຮົາຝາກບໍຣິຂານຄ່າຈີວອນໄວ້ທີ່ເຮືອນຂອງຄົນຂາຍຜ້າຊື່ນັ້ນ ທ່ານທັງຫຼາຍໂຜດໃຫ້ໄວຍາວັດຈະກອນໄປນຳຈີວອນຈາກເຮືອນນັ້ນມາແຈກກັນເທີ້ນ ຂ້ານ້ອຍ"

ພິກຂຸນີທັງຫຼາຍໃຫ້ເອົາບໍຣິຂານນັ້ນ ແລກປ່ຽນເພສັດເອງແລ້ວບໍຣິໂພກ ອຸປາສົກແລະອຸປາສິກາຮູ້ເຂົ້າ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ແລກປ່ຽນຂອງຢ່າງອື່ນນໍ"

ພິກຂຸນີທັງຫຼາຍ ໄດ້ຍິນພວກອຸປາສົກ ແລະອຸປາສິກາຕຳໜິ ປະນາມ ໂພນທະນາບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງໃຫ້ເອົາບໍຣິຂານ ທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ແລກປ່ຽນຂອງຢ່າງອື່ນນໍ ຯລຯ" ເມື່ອແລ້ວພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີໃຫ້ເອົາບໍຣິຂານທີ່ເຂົາ ຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ແລກປ່ຽນຂອງຢ່າງອື່ນແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີຈຶ່ງໃຫ້ເອົາບໍຣິຂານທີ່ເຂົາ

ຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ແລກປ່ຽນຂອງຢ່າງອື່ນນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວ ໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໕໙] ກໍ ພິກຂຸນີໃດໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄີຍະປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໗໖໐] ຄຳວ່າ ກໍ ฯລฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ฯລฯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ຄື ຂອງທີ່ທາຍົກຖວາຍເປັນມູນຄ່າປັດໄຈຢ່າງໜຶ່ງ

ຄຳວ່າ ທີ່ເຂົາບໍລິຈາກແກ່ສົງ ຄື ທີ່ເຂົາບໍລິຈາກເພື່ອປະໂຫຍດແກ່ສົງ ບໍ່ແມ່ນແກ່ຄະນະ ບໍ່ແມ່ນແກ່ບຸກຄົນ

ຄຳວ່າ ໃຫ້ ฯລฯ ແລກປ່ຽນຂອງຢ່າງອື່ນ ຄວາມວ່າ ໃຫ້ແລກປ່ຽນເປັນປັດໄຈ ຢ່າງອື່ນນອກຈາກທີ່ເຂົາຖວາຍເຈາະຈົງໄວ້ ຕ້ອງອາບັດທຸກກົດໃນຂະນະທີ່ໃຫ້ແລກປ່ຽນຂອງນັ້ນເປັນນິດສັກຄີຍ້ອນໄດ້ມາ ຄືເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ພິກຂຸນີອົງໜຶ່ງ

ພິກຂຸທັງຫຼາຍ ພິກຂຸນີ ເພິ່ງສະລະຂອງທີ່ເປັນນິດສັກຄີແນວນີ້

## ວິທີສະລະຂອງທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ຂອງນີ້ຂ້ານ້ອຍໃຫ້ເອົາບໍຣິຂານທີ່ເຂົາຖວາຍ

ເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ແລກປ່ຽນມາ ເປັນນິດສັກຄີ ຂ້ານ້ອຍຂໍສະລະຂອງນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸນີຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຂອງທີ່ທ່ານສະລະໃຫ້ນັ້ນດ້ວຍຍັດຕິກຳມະວາຈາວ່າ "ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງພິກຂຸນີຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວ ເພິ່ງຄືນຂອງນີ້ໃຫ້ແກ່ພິກຂຸນີຊື່ນີ້"

## ສະລະແກ່ຄະນະ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າທັງຫຼາຍ ຯລຯ ຂ້ານ້ອຍຂໍສະລະຂອງນີ້ແກ່ແມ່ເຈົ້າທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ຯລຯ ເພິ່ງຄືນຂອງນີ້ໃຫ້ແກ່ພິກຂຸນີຊື່ນີ້"

## ສະລະແກ່ບຸກຄົນ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ຯລຯ ຂ້ານ້ອຍຂໍສະລະຂອງນີ້ແກ່ແມ່ເຈົ້າ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ຯລຯ "ຂ້ານ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

## ບົດພາຊະນີ

## ຕິກະນິດສັກຄີຍະປາຈິດຕີ

[៣៦១] ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສຳຄັນວ່າເປັນ ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄີຍະປາຈິດຕີ

ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີບໍ່ແນ່ໃຈ ໃຫ້ແລກປ່ຽນ ຂອງຢ່າງອື່ນ ຕ້ອງອາບັດນິດສັກຄີຍະປາຈິດຕີ

ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄີຍະປາຈິດຕີ

ພິກຂຸນີໄດ້ຂອງທີ່ສະລະແລ້ວຄືນມາເພິ່ງລວມກັບປັດໄຈທີ່ເຂົາຖວາຍໄວ້

### ທຸກກະທຸກກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສໍາຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສໍາຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໖໔] ໑. ພິກຂຸນີນໍາກັບປິຍະພັນທີ່ເຫຼືອໄປໃຊ້ເພື່ອປະໂຫຍດຢ່າງອື່ນ

໒. ພິກຂຸນີຂໍອະນຸຍາດເຈົ້າຂອງກ່ອນຈຶ່ງນໍາໄປໃຊ້ເພື່ອປະໂຫຍດຢ່າງອື່ນ

໓. ພິກຂຸນີຜູ້ມີເຫດຂັດຂ້ອງ

໔. ພິກຂຸນີວິກົນຈະລິດ

໕. ພິກຂຸນີຕົ້ນບັນຍັດ

**ສິກຂາບົດທີ ໖ ຈົບ**

# ໑. ປັດຕະວັກ

## ສິກຂາບົດທີ ໗

## ວ່າດ້ວຍການແລກປ່ຽນບໍຣິຂານທີ່ເຂົາຖວາຍສົງຂໍ້ທີ ໒

## ເລື່ອງພິກຂຸນີຫຼາຍອົງ

[໗໖໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ອຸບາສົກແລະອຸບາສິກາລວບລວມບໍຣິຂານທີ່ເຂົາໃຫ້ດ້ວຍຄວາມພໍໃຈເພື່ອຄ່າຈີວອນຖວາຍພິກຂຸນີສົງແລ້ວຝາກໄວ້ທີ່ເຮືອນຂອງຄົນຂາຍຜ້າຄົນໜຶ່ງແລ້ວເຂົ້າໄປຫາພິກຂຸນີທັງຫຼາຍ ໄດ້ກ່າວດັ່ງນີ້ວ່າ "ແມ່ເຈົ້າ ພວກເຮົາຝາກ

ບໍຣິຂານຄ່າຈີວອນໄວ້ທີ່ເຮືອນຂອງຄົນຂາຍຜ້າຊື່ນັ້ນ ທ່ານທັງຫຼາຍໂຜດໃຫ້ໄວຍາ ວັດຈະກອນໄປນຳຈີວອນຈາກເຮືອນນັ້ນມາແຈກກັນເທີ້ນ ຂ້ານ້ອຍ"

ພິກຂຸນີທັງຫຼາຍ ຂໍໃຫ້ເອົາບໍຣິຂານນັ້ນແລກປ່ຽນເພສັດເອງແລ້ວບໍຣິໂພກ ພວກອຸປາສົກແລະອຸປາສິກາຮູ້ເຂົ້າ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍ ອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນນໍ"

ພິກຂຸນີທັງຫຼາຍ ໄດ້ຍິນອຸປາສົກແລະອຸປາສິກາຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງໄວ້ຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນນໍ" ເມື່ອແລ້ວພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນັ້ນໄປບອກພິກຂຸທັງຫຼາຍ ພວກພິກຂຸໄດ້ນຳເລື້ອງນັ້ນ ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສ ໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງ ໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໒໔] ກໍພິກຂຸນີໃດໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄີຍະປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[ກ໗໕] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ຄື ຂອງທີ່ທາຍົກຖວາຍເປັນມູນຄ່າປັດໄຈຢ່າງໜຶ່ງ

ຄຳວ່າ ທີ່ເຂົາບໍລິຈາກແກ່ສົງ ຄື ທີ່ເຂົາບໍລິຈາກເພື່ອປະໂຫຍດແກ່ສົງ ບໍ່ແມ່ນແກ່ຄະນະບໍ່ແມ່ນແກ່ບຸກຄົນ

ຄຳວ່າ ທີ່ຂໍມາເອງ ຄື ຂໍມາແລ້ວເອງ

ຄຳວ່າ ໃຫ້ ຯລຯ ແລກປ່ຽນຂອງຢ່າງອື່ນ ຄວາມວ່າ ໃຫ້ແລກປ່ຽນເປັນປັດໄຈ ຢ່າງອື່ນນອກຈາກທີ່ເຂົາຖວາຍເຈາະຈົງໄວ້ ຕ້ອງອາບັດທຸກກົດໃນຂະນະທີ່ໃຫ້ແລກປ່ຽນຂອງນັ້ນ ເປັນນິດສັກຄີຍ້ອນໄດ້ມາ ຄືເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ພິກຂຸນີອົງໜຶ່ງ

ພິກຂຸທັງຫຼາຍ ພິກຂຸນີເພິ່ງສະລະຂອງທີ່ເປັນນິດສັກຄີແນວນີ້

## ວິທີສະລະຂອງທີ່ເປັນນິດສັກຄີ

## ສະລະແກ່ສົງ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຍໍ້ ປະນົມມືກ່າວແນວນີ້ວ່າ "ແມ່ເຈົ້າ ຂອງນີ້ຂ້ານ້ອຍໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ທີ່ຂໍມາເອງ ແລກປ່ຽນມາ ເປັນນິດສັກຄີ ຂ້ານ້ອຍຂໍສະລະຂອງນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸນີ ຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຂອງທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງພິກຂຸນີຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວເພິ່ງຄືນຂອງນີ້ໃຫ້ແກ່ພິກຂຸນີຊື່ນີ້"

## ສະລະແກ່ຄະນະ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າທັງຫຼາຍ ຯລຯ ຂ້ານ້ອຍຂໍສະລະຂອງນີ້ແກ່ແມ່ເຈົ້າທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ຯລຯ ເພິ່ງຄືນຂອງນີ້ໃຫ້ແກ່ພິກຂຸນີຊື່ນີ້"

## ສະລະແກ່ບຸກຄົນ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ฯลฯ ຂ້ານ້ອຍຂໍສະລະຂອງນີ້ແກ່ແມ່ເຈົ້າ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ฯลฯ "ຂ້ານ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[໗໖໖] ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສໍາຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີບໍ່ແນ່ໃຈ ໃຫ້ແລກປ່ຽນ ຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສໍາຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸນີໄດ້ ຂອງທີ່ສະລະແລ້ວຄືນມາເພິ່ງລວມກັບປັດໄຈທີ່ເຂົາຖວາຍໄວ້

## ທຸກະທຸກກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສໍາຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສໍາຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໖໗] ໑. ພິກຂຸນີ ນໍາກັບປິຍະພັນທີ່ເຫຼືອໄປໃຊ້ເພື່ອປະໂຫຍດຢ່າງອື່ນ

໔. ພິກຂຸນີ ຂໍອະນຸຍາດເຈົ້າຂອງກ່ອນຈຶ່ງນຳໄປໃຊ້ເພື່ອປະໂຫຍດຢ່າງອື່ນ
໓. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໔. ພິກຂຸນີ ວິກົນຈະລິດ
໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ໑. ປັດຕະວັກ

## ສິກຂາບົດທີ ໗

## ວ່າດ້ວຍການແລກປ່ຽນບໍຣິຂານທີ່ເຂົາຖວາຍຄະນະຂໍ້ທີ ໑

## ເລື້ອງພິກຂຸນີຫຼາຍອົງ

[໗໙໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍອາໄສຢູ່ໃນບໍລິເວນຂອງສະມາຄົມແຫ່ງໜຶ່ງ ອັດຕະຄັດເຂົ້າຕົ້ມ ສະມາຄົມນັ້ນຈຶ່ງລວບລວມບໍຣິຂານທີ່ເຂົາໃຫ້ດ້ວຍຄວາມພໍໃຈເພື່ອຄ່າເຂົ້າຕົ້ມຖວາຍພິກຂຸນີທັງຫຼາຍແລ້ວ ຝາກໄວ້ທີ່ເຮືອນຂອງເຈົ້າຂອງຮ້ານຄ້າຄົນໜຶ່ງແລ້ວເຂົ້າໄປຫາພິກຂຸນີທັງຫຼາຍ ໄດ້ກ່າວດັ່ງນີ້ວ່າ "ແມ່ເຈົ້າ ພວກເຮົາຝາກບໍຣິຂານຄ່າເຂົ້າຕົ້ມໄວ້ທີ່ເຮືອນຂອງເຈົ້າຂອງຮ້ານຄ້າຊື່ນັ້ນ ທ່ານທັງຫຼາຍໂຜດໃຫ້ໄວຍາວັດຈະກອນ ໄປນຳເຂົ້າສານຈາກເຮືອນນັ້ນມາຫຸງຕົ້ມສັນເທີ້ນ ຂ້ານ້ອຍ"

ພິກຂຸນີທັງຫຼາຍໃຫ້ເອົາບໍຣິຂານນັ້ນ ແລກປ່ຽນເພສັດແລ້ວບໍຣິໂພກ ສະມາຄົມນັ້ນຮູ້ເຂົ້າຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ແລກປ່ຽນຂອງຢ່າງອື່ນນໍ"

ພິກຂຸນີທັງຫຼາຍໄດ້ຍິນສະມາຄົມນັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ແລກປ່ຽນຂອງຢ່າງອື່ນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍແລກປ່ຽນຂອງຢ່າງອື່ນ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯลฯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍແລກປ່ຽນຂອງຢ່າງອື່ນນໍ ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯลฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໙] ກໍພິກຂຸນີໃດໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

**ເລື້ອງພິກຂຸນີຫຼາຍອົງ ຈົບ**

## ສິກຂາບົດວິພັງ

[໘໐] ຄຳວ່າ ກໍ ฯลฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯลฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ฯลฯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ນີ້ທີ່ພຣະຜູ້ພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍ ອຸທິດຂອງຢ່າງໜຶ່ງ ຄື ຂອງທີ່ທາຍົກຖວາຍເປັນມູນຄ່າປັດໄຈຢ່າງໜຶ່ງ

ຄຳວ່າ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ຄື ທີ່ເຂົາບໍລິຈາກເພື່ອປະໂຫຍດແກ່ຄະນະ ບໍ່ແມ່ນແກ່ສົງ ບໍ່ແມ່ນແກ່ບຸກຄົນ

ຄຳວ່າ ໃຫ້ ฯลฯ ແລກປ່ຽນຂອງຢ່າງອື່ນ ຄວາມວ່າ ໃຫ້ແລກປ່ຽນເປັນປັດໄຈ ຢ່າງອື່ນນອກຈາກທີ່ເຂົາຖວາຍເຈາະຈົງໄວ້ ຕ້ອງອາບັດທຸກກົດໃນຂະນະທີ່ໃຫ້ແລກປ່ຽນ

ຂອງນັ້ນ ເປັນນິດສັກຄີຍ້ອນໄດ້ມາ ຄືເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼືແກ່ພິກຂຸນີອົງດຽວ

ພິກຂຸທັງຫຼາຍ ພິກຂຸນີເພິ່ງສະລະຂອງທີ່ເປັນນິດສັກຄີແນວນີ້

## ວິທີສະລະຂອງທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຍໍ້ ປະນົມມືກ່າວແນວນີ້ວ່າ "ແມ່ເຈົ້າ ຂອງນີ້ ຂ້ານ້ອຍໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ແລກປ່ຽນມາ ເປັນນິດສັກຄີ ຂ້ານ້ອຍຂໍສະລະຂອງນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸນີ ຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຂອງທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາ ວ່າ "ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງພິກຂຸນີຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວເພິ່ງຄືນຂອງນີ້ໃຫ້ແກ່ພິກຂຸນີຊື່ນີ້"

### ສະລະແກ່ຄະນະ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າທັງຫຼາຍ ຯລຯ ຂ້ານ້ອຍຂໍສະລະຂອງນີ້ແກ່ແມ່ເຈົ້າທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ຯລຯ ເພິ່ງຄືນຂອງນີ້ໃຫ້ແກ່ພິກຂຸນີຊື່ນີ້"

### ສະລະແກ່ບຸກຄົນ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ຯລຯ ຂ້ານ້ອຍຂໍສະລະຂອງນີ້ແກ່ແມ່ເຈົ້າ" ເມື່ອສະລະແລ້ວເພິ່ງແສະແດງອາບັດ

ຯລຯ "ຂ້ານ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[ກາງ໑] ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີບໍ່ແນ່ໃຈ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸນີໄດ້ຂອງທີ່ສະລະແລ້ວຄືນມາເພິ່ງລວມກັບປັດໄຈທີ່ເຂົາຖວາຍໄວ້

## ທຸກະທຸກກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[ກາງ໔] ໑. ພິກຂຸນີ ນຳກັບປີຍະພັນທີ່ເຫຼືອໄປໃຊ້ເພື່ອປະໂຫຍດຢ່າງອື່ນ

໒. ພິກຂຸນີ ຂໍອະນຸຍາດເຈົ້າຂອງກ່ອນຈຶ່ງນຳໄປໃຊ້ເພື່ອປະໂຫຍດຢ່າງອື່ນ

໓. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ๗ ຈົບ**

# ໑. ປັດຕະວັກ

## ສິກຂາບົດທີ ໗

## ວ່າດ້ວຍການແລກປ່ຽນບໍຣິຂານທີ່ເຂົາຖວາຍແກ່ຄະນະຂໍ້ທີ ໘

## ເລື້ອງພິກຂຸນີຫຼາຍອົງ

[໗໗໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍທີ່ອາໄສຢູ່ໃນບໍລິເວນຂອງສະມາຄົມແຫ່ງໜຶ່ງ ອັດຕະຄັດເຂົ້າຕົ້ມ ສະມາຄົມນັ້ນຈຶ່ງລວບລວມບໍຣິຂານທີ່ເຂົາໃຫ້ດ້ວຍຄວາມພໍໃຈເພື່ອຄ່າເຂົ້າຕົ້ມຖວາຍພິກຂຸນີທັງຫຼາຍແລ້ວ ຝາກໄວ້ທີ່ເຮືອນຂອງເຈົ້າຂອງຮ້ານຄ້າຄົນໜຶ່ງແລ້ວເຂົ້າໄປຫາພິກຂຸນີທັງຫຼາຍ ໄດ້ກ່າວດັ່ງນີ້ວ່າ “ແມ່ເຈົ້າ ພວກເຮົາຝາກບໍຣິຂານຄ່າເຂົ້າຕົ້ມໄວ້ທີ່ເຮືອນຂອງເຈົ້າຂອງຮ້ານຄ້າຊື່ນັ້ນ ທ່ານທັງຫຼາຍໂຜດໃຫ້ໄວຍາວັດຈະກອນໄປນຳເຂົ້າສານຈາກເຮືອນນັ້ນມາຫຸງຕົ້ມສັນເທີ້ນ ຂ້ານ້ອຍ”

ພິກຂຸນີທັງຫຼາຍ ຂໍໃຫ້ເອົາບໍຣິຂານນັ້ນແລກປ່ຽນເພສັດເອງແລ້ວບໍຣິໂພກ ສະມາຄົມນັ້ນຮູ້ເຂົ້າ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພວກພິກຂຸນີຈຶ່ງໃຫ້ ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນນໍ”

ພິກຂຸນີທັງຫຼາຍ ໄດ້ຍິນສະມາຄົມນັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພວກພິກຂຸນີຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນນໍ” ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງ ນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນ ແມ່ນບໍ?” ພິກຂຸທັງຫຼາຍທູນຮັບວ່າ “ແມ່ນ

ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂລໂຫ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີ ຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ

ໂລໂຫ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໗໔] ກໍພິກຂຸນີໃດໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕິ

**ເລື້ອງພິກຂຸນີຫຼາຍອົງ ຈົບ**

## ສິກຂາບົດວິພັງ

[໗໗໕] ຄຳວ່າ ກໍ ໂລໂຫ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໂລໂຫ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໂລໂຫ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ໂລໂຫ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ຄື ຂອງທີ່ທາຍົກຖວາຍເປັນມູນຄ່າປັດໄຈຢ່າງໜຶ່ງ

ຄຳວ່າ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ຄື ທີ່ເຂົາບໍລິຈາກເພື່ອປະໂຫຍດແກ່ຄະນະ ບໍ່ແມ່ນແກ່ສົງ ບໍ່ແມ່ນແກ່ບຸກຄົນ

ຄຳວ່າ ທີ່ຂໍມາເອງ ຄື ຂໍມາແລ້ວດ້ວຍຕົນເອງ

ຄຳວ່າ ໃຫ້ ໂລໂຫ ແລກປ່ຽນຂອງຢ່າງອື່ນ ຄວາມວ່າ ໃຫ້ແລກປ່ຽນເປັນປັດໄຈ ຢ່າງອື່ນນອກຈາກທີ່ເຂົາຖວາຍເຈາະຈົງໄວ້ ຕ້ອງອາບັດທຸກກົດໃນຂະນະທີ່ໃຫ້ແລກປ່ຽນ ຂອງນັ້ນເປັນນິສັກຄິຍ້ອນໄດ້ມາ ຄືເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ພິກຂຸນີອົງດຽວ

ພິກຂຸທັງຫຼາຍ ພິກຂຸນີ ເພິ່ງສະລະຂອງທີ່ເປັນນິດສັກຄິແບບນີ້

## ວິທີສະລະທີ່ເປັນນິສັກຄີ

### ສະລະແກ່ສົງ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ຂອງນີ້ຂ້ານ້ອຍໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ທີ່ຂໍມາເອງ ແລກປ່ຽນມາ ເປັນນິດສັກຄີ ຂ້ານ້ອຍຂໍສະລະຂອງນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸນີຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຂອງທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງພິກຂຸນີຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວເພິ່ງຄືນຂອງນີ້ໃຫ້ແກ່ພິກຂຸນີຊື່ນີ້"

### ສະລະແກ່ຄະນະ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າທັງຫຼາຍ ຯລຯ ຂ້ານ້ອຍຂໍສະລະຂອງນີ້ແກ່ແມ່ເຈົ້າທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ຯລຯ ເພິ່ງຄືນຂອງນີ້ໃຫ້ແກ່ພິກຂຸນີຊື່ນີ້"

### ສະລະແກ່ບຸກຄົນ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ຯລຯ ຂ້ານ້ອຍຂໍສະລະຂອງນີ້ແກ່ແມ່ເຈົ້າ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ຯລຯ "ຂ້ານ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

### ບົດພາຊະນີ

### ຕິກະນິດສັກຄິຍະປາຈິດຕີ

[ກາຜ] ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີບໍ່ແນ່ໃຈ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸນີໄດ້ຂອງທີ່ສະລະແລ້ວຄືນມາເພິ່ງລວມກັບປັດໄຈທີ່ເຂົາຖວາຍໄວ້

## ທຸກກະທຸກກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[ກຸກຸ] ໑. ພິກຂຸນີ ນຳກັບປີຍະພັນທີ່ເຫຼືອໄປໃຊ້ເພື່ອປະໂຫຍດຢ່າງອື່ນ

໒. ພິກຂຸນີ ຂໍອະນຸຍາດເຈົ້າຂອງກ່ອນຈຶ່ງນຳໄປໃຊ້ເພື່ອປະໂຫຍດຢ່າງອື່ນ

໓. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ໑. ປັດຕະວັກ

## ສິກຂາບົດທີ ໑໐

## ວ່າດ້ວຍການແລກປ່ຽນບໍຣິຂານທີ່ເຂົາຖວາຍແກ່ບຸກຄົນ

## ເລື່ອງພິກຂຸນີຖຸນລະນັນທາ

[໗໗໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາເປັນພະຫູສູດ ເປັນນັກເວົ້າ ແກ່ກ້າ ສາມາດກ່າວທຳມີກະຖາ ຄົນຈຳນວນຫຼາຍເຂົ້າໄປຫາພິກຂຸນີຖຸລະນັນທານັ້ນ ສະໄໝນັ້ນ ບໍລິເວນທີ່ຢູ່ຂອງພິກຂຸນີຖຸນລະນັນທາເສຍຫາຍ ຊາວບ້ານໄດ້ກ່າວກັບພິກຂຸນີຖຸນລະນັນທາດັ່ງນີ້ວ່າ "ແມ່ເຈົ້າ ຍ້ອນຫຍັງບໍລິເວນທີ່ຢູ່ຂອງທ່ານຈຶ່ງເສຍຫາຍນໍ"

ນາງຕອບວ່າ "ຍ້ອນບໍ່ມີທາຍົກ ຜູ້ກໍ່ສ້າງຊ່ອມແຊມກໍບໍ່ມີ"

ຄົນທັງຫຼາຍ ຈຶ່ງລວບລວມບໍຣິຂານທີ່ເຂົາໃຫ້ດ້ວຍຄວາມພໍໃຈເປັນຄ່າບູລະນະບໍລິເວນຖວາຍ ພິກຂຸນີຖຸນລະນັນທາ ແຕ່ພິກຂຸນີຖຸນລະນັນທາຂໍໃຫ້ເອົາບໍຣິຂານນັ້ນແລກປ່ຽນເພສັດເອງແລ້ວບໍຣິໂພກ

ພວກຊາວບ້ານຮູ້ເລື້ອງເຂົ້າ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາ ຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ບຸກຄົນ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນນໍ" ເມື່ອແລ້ວພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາໃຫ້ເອົາບໍຣິຂານ ທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ບຸກຄົນທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາ ຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງ

ຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ບຸກຄົນ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໗໙] ກໍພິກຂຸນີໃດໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ບຸກຄົນ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໗໘໐] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ຄື ຂອງທີ່ທາຍົກຖວາຍເປັນມູນຄ່າປັດໄຈຢ່າງໜຶ່ງ

ຄຳວ່າ ທີ່ເຂົາບໍລິຈາກແກ່ບຸກຄົນ ຄື ທີ່ເຂົາບໍລິຈາກເພື່ອປະໂຫຍດແກ່ບຸກຄົນ ບໍ່ແມ່ນແກ່ສົງ ບໍ່ແມ່ນແກ່ຄະນະ

ຄຳວ່າ ທີ່ຂໍມາເອງ ຄື ຂໍມາແລ້ວເອງ

ຄຳວ່າ ໃຫ້ ຯລຯ ແລກປ່ຽນຂອງຢ່າງອື່ນ ຄວາມວ່າ ໃຫ້ແລກປ່ຽນປັດໄຈຢ່າງອື່ນນອກຈາກທີ່ເຂົາຖວາຍເຈາະຈົງໄວ້ ຕ້ອງອາບັດທຸກກົດໃນຂະນະທີ່ໃຫ້ແລກປ່ຽນ ຂອງນັ້ນເປັນນິດສັກຄີຍ້ອນໄດ້ມາ ຄືເປັນຂອງຈຳຕ້ອງສະລະແກ່ສົງ ແກ່ຄະນະ ຫຼື ແກ່ພິກຂຸນີອົງດຽວ

ພິກຂຸທັງຫຼາຍ ພິກຂຸນີເພິ່ງສະລະຂອງທີ່ເປັນນິດສັກຄີແນວນີ້

## ວິທີສະລະຂອງທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸນີອົງນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ຂອງນີ້ ຂ້ານ້ອຍໃຫ້ເອົາບໍຣິຂານທີ່ເຂົາ

ຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ທີ່ເຂົາຖວາຍອຸທິດຂອງຢ່າງໜຶ່ງ ທີ່ເຂົາບໍລິຈາກແກ່ບຸກຄົນທີ່ຂໍມາເອງ ແລກປ່ຽນມາ ເປັນນິດສັກຄີ ຂ້ານ້ອຍຂໍສະລະຂອງນີ້ແກ່ສົງ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸນີ ຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຂອງທີ່ທ່ານສະລະໃຫ້ດ້ວຍຍັດຕິກຳມະວາຈາວ່າ "ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງພິກຂຸນີຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວເພິ່ງຄືນຂອງນີ້ໃຫ້ແກ່ພິກຂຸນີຊື່ນີ້"

## ສະລະແກ່ຄະນະ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຍ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າທັງຫຼາຍ ຯລຯ ຂ້ານ້ອຍຂໍສະລະຂອງນີ້ແກ່ແມ່ເຈົ້າທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ຯລຯ ເພິ່ງຄືນຂອງນີ້ໃຫ້ແກ່ພິກຂຸນີຊື່ນີ້"

## ສະລະແກ່ບຸກຄົນ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ຯລຯ ຂ້ານ້ອຍຂໍສະລະຂອງນີ້ແກ່ແມ່ເຈົ້າ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ຯລຯ "ຂ້ານ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[ກ໗໑] ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີບໍ່ແນ່ໃຈ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ໃຫ້ແລກປ່ຽນຂອງອື່ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

ພິກຂຸນີໄດ້ຂອງທີ່ສະລະແລ້ວຄືນມາເພິ່ງລວມກັບປັດໄຈທີ່ເຂົາຖວາຍໄວ້ເດີມ

## ທຸກກະທຸກາກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ພິກຂຸນີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈຢ່າງໜຶ່ງ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໘໔] ໑. ພິກຂຸນີ ນຳກັບປິຍະພັນທີ່ເຫຼືອໄປໃຊ້ເພື່ອປະໂຫຍດຢ່າງອື່ນ

໒. ພິກຂຸນີ ຂໍອະນຸຍາດເຈົ້າຂອງກ່ອນຈຶ່ງນຳໄປໃຊ້ເພື່ອປະໂຫຍດຢ່າງອື່ນ

໓. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑໐ ຈົບ**

# ໑. ປັດຕະວັກ

## ສິກຂາບົດທີ ໑໑

## ວ່າດ້ວຍການຂໍຜ້າຫົ່ມໜາໃນລະດູໜາວ

## ເລື້ອງພິກຂຸນີຖຸນລະນັນທາ

[໗໘໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາເປັນພະຫູສູດ ເປັນນັກເວົ້າ ແກ່ກ້າ ສາມາດກ່າວທຳມີກະຖາ ສະໄໝນັ້ນໃນລະດູໜາວ ພຣະເຈົ້າປະເສນທິໂກສົນ ຊົງຜ້າກຳພົນລາຄາແພງເຂົ້າໄປຫາພິກຂຸນີຖຸນລະນັນທາເຖິງທີ່ຢູ່ ຊົງອະພິວາດແລ້ວປະທັບນັ່ງໃນທີ່ສົມຄວນ ພິກຂຸນີຖຸນລະນັນທາຊີ້ແຈ່ງໃຫ້ພຣະເຈົ້າປະເສນທິໂກສົນຜູ້ປະທັບນັ່ງໃນທີ່

ສົມຄວນ ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນຜູ້ເຊິ່ງພິກຂຸນີຖຸນລະນັນທາ ຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວ ໄດ້ຕັດກັບພິກຂຸນີຖຸນລະນັນທາດັ່ງນີ້ວ່າ"ແມ່ເຈົ້າ ທ່ານຕ້ອງການສິ່ງໃດກໍໂຜດບອກມາເທີ້ນ"

ພິກຂຸນີຖຸນລະນັນທານັ້ນທູນວ່າ "ຂໍຖວາຍພຣະພອນ ຖ້າພຣະອົງມີພຣະຣາດຊະປະສົງຈະພຣະຣາດຊະທານ ກໍຂໍໄດ້ໂຜດພຣະຣາດຊະທານຜ້າກຳພົນຜືນນີ້ເທີ້ນ"

ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນຖວາຍຜ້າກຳພົນຜືນນັ້ນແກ່ພິກຂຸນີຖຸນລະນັນທາສະເດັດ ລຸກຈາກທີ່ປະທັບນັ່ງຊົງອະພິວາດພິກຂຸນີຖຸນລະນັນທາແລ້ວທຳປະທັກຂິນສະເດັດຈາກໄປ

ພວກຊາວບ້ານຕຳໜິ ປະນາມ ໂພນທະນາວ່າ "ພວກພິກຂຸນີເປັນຄົນມັກຫຼາຍ ບໍ່ສັນໂດດ ເປັນຫຍັງຈຶ່ງອອກປາກທູນຂໍຜ້າກຳພົນຈາກພຣະຣາຊານໍ"

ພິກຂຸນີທັງຫຼາຍໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ฯລฯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງອອກປາກທູນຂໍຜ້າກຳພົນຈາກພຣະຣາຊານໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາອອກປາກທູນ ຂໍຜ້າກຳພົນຈາກພຣະຣາຊາ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາ ຈຶ່ງອອກປາກທູນຂໍຜ້າກຳພົນຈາກພຣະຣາຊານໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໘໔] ກໍພິກຂຸນີ ເມື່ອຈະຂໍຜ້າຫົ່ມໜາ ເພິ່ງຂໍໄດ້ພຽງລາຄາ ໔ ກັງສະ ເປັນຢ່າງຫຼາຍ ຖ້າຂໍເກີນກວ່ານັ້ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

**ເລື້ອງພິກຂຸນີຖຸນລະນັນທາ ຈົບ**

## ສິກຂາບົດວິພັງ

[ກ໘໕] ທີ່ຊື່ວ່າ ຜ້າຫົ່ມໜາ ໄດ້ແກ່ ຜ້າຫົ່ມຊະນິດໜຶ່ງທີ່ໃຊ້ຫົ່ມໃນລະດູໜາວ[๑]

ຄຳວ່າ ເມື່ອຈະຂໍ ຄື ເມື່ອຈະອອກປາກຂໍ

ຄຳວ່າ ເພິ່ງຂໍໄດ້ພຽງລາຄາ ໔ ກັງສະ ຄື ເພິ່ງຂໍຜ້າທີ່ມີລາຄາ ໑໖ ກະຫາປະນະໄດ້

ຄຳວ່າ ຖ້າຂໍເກີນກວ່ານັ້ນ ຄວາມວ່າ ພິກຂຸນີອອກປາກຂໍຜ້າລາຄາເກີນກວ່ານັ້ນ ຕ້ອງອາບັດທຸກກົດໃນຂະນະທີ່ຂໍ ຜ້ານັ້ນເປັນນິດສັກຄີຍ້ອນໄດ້ມາ ຄື ເປັນຂອງຈຳຕ້ອງສະລະແກ່ສົງແກ່ຄະນະຫຼືແກ່ພິກຂຸນີອົງດຽວ

ພິກຂຸທັງຫຼາຍ ພິກຂຸນີເພິ່ງສະລະຜ້າທີ່ເປັນນິດສັກຄີແບບນີ້

## ວິທີສະລະຜ້າຫົ່ມທີ່ເປັນນິດສັກຄີ

### ສະລະແກ່ສົງ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຢໍ້ ປະນົມມື ກ່າວແບບນີ້ວ່າ “ແມ່ເຈົ້າ ຜ້າຫົ່ມໜາຜືນນີ້ລາຄາເກີນ ໔ ກັງສະ ຂ້ານ້ອຍຂໍມາ ເປັນນິດສັກຄີ ຂ້ານ້ອຍຂໍສະລະຜ້າຫົ່ມໜາຜືນນີ້ ແກ່ສົງ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ພິກຂຸນີຜູ້ສະຫຼາດ ສາມາດເພິ່ງຮັບອາບັດ ເພິ່ງຄືນຜ້າຫົ່ມໜາທີ່ທ່ານສະລະໃຫ້ດ້ວຍຍັດຕິກຳ ວາຈາວ່າ “ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຜ້າຫົ່ມໜາຜືນນີ້ຂອງພິກຂຸຊື່ນີ້ ເປັນນິດສັກຄີທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວເພິ່ງຄືນຜ້າຫົ່ມໜາຜືນນີ້ໃຫ້ແກ່ພິກຂຸນີຊື່ນີ້”

### ສະລະແກ່ຄະນະ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຢໍ້ ປະນົມມື ກ່າວແບບນີ້ວ່າ “ແມ່ເຈົ້າທັງຫຼາຍ ຯລຯ ຂ້ານ້ອຍຂໍສະລະຜ້າຫົ່ມໜາຜືນນີ້ແກ່ແມ່ເຈົ້າທັງຫຼາຍ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ຯລຯ ເພິ່ງຄືນຜ້າຫົ່ມໜາຜືນນີ້ໃຫ້ແກ່ພິກຂຸນີຊື່ນີ້”

### ສະລະແກ່ບຸກຄົນ

ພິກຂຸນີອົງນັ້ນເພິ່ງເຂົ້າໄປຫາພິກຂຸນີອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວແບບນີ້ວ່າ “ແມ່ເຈົ້າ ຯລຯ ຂ້ານ້ອຍຂໍສະລະຜ້າຫົ່ມໜາຜືນນີ້ແກ່ແມ່ເຈົ້າ” ເມື່ອສະລະແລ້ວເພິ່ງສະແດງອາບັດ

ຯລຯ “ຂ້ານ້ອຍຄືນຜ້າຫົ່ມໜາຜືນນີ້ໃຫ້ແກ່ແມ່ເຈົ້າ”

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[໗໘໖] ຜ້າຫົ່ມໜາລາຄາເກີນ ໔ ກັງສະ ພິກຂຸນີສຳຄັນວ່າເກີນ ຂໍ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຜ້າຫົ່ມໜາລາຄາເກີນ ໔ ກັງສະ ພິກຂຸນີບໍ່ແນ່ໃຈ ຂໍ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຜ້າຫົ່ມໜາລາຄາເກີນ ໔ ກັງສະ ພິກຂຸນີສຳຄັນວ່າມີລາຄາຍ່ອນກວ່າ ຂໍ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກະທຸກກົດ

ຜ້າຫົ່ມໜາລາຄາຍ່ອນກວ່າ ໔ ກັງສະ ພິກຂຸນີສຳຄັນວ່າເກີນ ຕ້ອງອາບັດທຸກກົດ

ຜ້າຫົ່ມໜາລາຄາຍ່ອນກວ່າ ໔ ກັງສະ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ຜ້າຫົ່ມໜາລາຄາຍ່ອນກວ່າ ໔ ກັງສະ ພິກຂຸນີສຳຄັນວ່າຍ່ອນກວ່າ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໘໗] ໑. ພິກຂຸນີ ຂໍຜ້າຫົ່ມໜາລາຄາ ໔ ກັງສະເປັນຢ່າງຫຼາຍ

໒. ພິກຂຸນີ ຂໍຜ້າຫົ່ມໜາລາຄາຍ່ອນກວ່າ ໔ ກັງສະ

໓. ພິກຂຸນີ ຂໍຈາກຍາດ

໔. ພິກຂຸນີ ຂໍຈາກຄົນປະວາຣະນາ

໕. ພິກຂຸນີ ຂໍເພື່ອປະໂຫຍດແກ່ຜູ້ອື່ນ

໖. ພິກຂຸນີ ຊື້ມາດ້ວຍຊັບຂອງຕົນ

໗. ພິກຂຸນີ ຈ່າຍຜ້າລາຄາຖືກ ແຕ່ທາຍົກຜູ້ຕ້ອງການໃຫ້ຈ່າຍຜ້າລາຄາແພງ

໘. ພິກຂຸນີ ວິກົນຈະລິດ

໙. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑໑ ຈົບ**

# ໑. ປັດຕະວັກ

## ສິກຂາບົດທີ ໑໘

## ວ່າດ້ວຍການຂໍຜ້າຫົ່ມບາງໃນລະດູຮ້ອນ

## ເລື້ອງພິກຂຸນີຖຸນລະນັນທາ

[໗໙໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາເປັນພະຫູສູດ ເປັນນັກເວົ້າ ແກ່ກ້າ ສາມາດກ່າວທຳມີກະຖາ ສະໄໝນັ້ນໃນລະດູຮ້ອນ ພຣະເຈົ້າປະເສນທິໂກສົນ ຊົງຜ້າເປືອກໄມ້ລາຄາແພງ ເຂົ້າໄປຫາພິກຂຸນີຖຸນລະນັນທາເຖິງທີ່ຢູ່ ຊົງອະພິວາດແລ້ວປະທັບນັ່ງໃນທີ່ສົມຄວນ ພິກຂຸນີຖຸນລະນັນທາຊີ້ແຈ່ງໃຫ້ພຣະເຈົ້າປະເສນທິໂກສົນຜູ້ປະທັບນັ່ງໃນທີ່ສົມຄວນໃຫ້ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນຜູ້ເຊິ່ງພິກຂຸນີ ຖຸນລະນັນທາຊີ້ແຈ່ງໃຫ້ເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວ ໄດ້ຕັດກັບພິກຂຸນີຖຸນລະນັນທາດັ່ງນີ້ວ່າ "ແມ່ເຈົ້າ ທ່ານຕ້ອງການສິ່ງໃດກໍໂຜດໄດ້ບອກເທີ້ນ"

ພິກຂຸນີຖຸນລະນັນທານັ້ນທູລວ່າ "ຂໍຖວາຍພຣະພອນ ຖ້າພຣະອົງມີພຣະຣາດຊະປະສົງຈະພຣະຣາດຊະທານ ກໍຂໍໄດ້ໂຜດພຣະຣາດຊະທານຜ້າເປືອກໄມ້ຜືນນີ້ເທີ້ນ"

ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນຖວາຍຜ້າເປືອກໄມ້ຜືນນັ້ນແກ່ພິກຂຸນີຖຸນລະນັນທາ ສະເດັດລຸກຈາກທີ່ປະທັບນັ່ງແລ້ວ ຊົງອະພິວາດພິກຂຸນີຖຸນລະນັນທາແລ້ວ ກະທຳປະທັກຂິນສະເດັດຈາກໄປ

ພວກຊາວບ້ານຕຳໜິ ປະນາມ ໂພນທະນາວ່າ "ພວກພິກຂຸນີເປັນຄົນມັກຫຼາຍ ບໍ່ສັນໂດດ ເປັນຫຍັງຈຶ່ງອອກປາກທູນຂໍຜ້າເປືອກໄມ້ຈາກພຣະຣາຊານໍ"

ພິກຂຸນີທັງຫຼາຍ ໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງອອກປາກທູນຂໍຜ້າເປືອກໄມ້ຈາກພຣະຣາຊານໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາອອກປາກທູນຂໍຜ້າເປືອກໄມ້ຈາກພຣະຣາຊາ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາຈຶ່ງອອກປາກທູນຂໍຜ້າເປືອກໄມ້ຈາກພຣະຣາຊານໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນ ສະແດງດັ່ງນີ້

## ພຣະບັນຍັດ

[໗໘໙] ກໍພິກຂຸນີເມື່ອຈະຂໍຜ້າຫົ່ມບາງ ເພິ່ງຂໍໄດ້ພຽງລາຄາ ໔ ກັງສະເຄິ່ງເປັນຢ່າງຫຼາຍ ຖ້າຂໍເກີນກວ່ານັ້ນ ຕ້ອງອາບັດນິດສັກຄິຍະປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໗໙໐] ທີ່ຊື່ວ່າ ຜ້າຫົ່ມບາງ ໄດ້ແກ່ ຜ້າຫົ່ມຊະນິດໜຶ່ງທີ່ໃຊ້ໃນລະດູຮ້ອນ

ຄຳວ່າ ເມື່ອຈະຂໍ ຄື ເມື່ອຈະອອກປາກຂໍ

ຄຳວ່າ ເພິ່ງຂໍໄດ້ພຽງລາຄາ ໔ ກັງສະເຄິ່ງເປັນຢ່າງຫຼາຍ ຄື ເພິ່ງຂໍຜ້າມີລາຄາ ໑໐ ກະຫາປະນະໄດ້

ຄຳວ່າ ຖ້າຂໍເກີນກວ່ານັ້ນ ຄວາມວ່າ ພິກຂຸນີອອກປາກຂໍຜ້າລາຄາເກີນກວ່ານັ້ນ ຕ້ອງອາບັດທຸກກົດໃນຂະນະທີ່ຂໍ ຜ້ານັ້ນເປັນນິດສັກຄີຍ້ອນໄດ້ມາ ຄືເປັນຂອງຈຳຕ້ອງສະລະແກ່ສົງແກ່ຄະນະ ຫຼື ແກ່ພິກຂຸນີອົງດຽວ

ພິກຂຸທັງຫຼາຍ ພິກຂຸນີ ເພິ່ງສະລະຜ້າຫົ່ມບາງທີ່ເປັນນິດສັກຄີແນວນີ້

## ວິທີສະລະຜ້າຫົ່ມທີ່ເປັນນິດສັກຄີ

## ສະລະແກ່ສົງ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ຜ້າຫົ່ມບາງຜືນນີ້ລາຄາເກີນ ໔ ກັງສະ

ເຄິ່ງ ຂ້ານ້ອຍຂໍມາ ເປັນນິດສັກຄີ ຂ້ານ້ອຍຂໍສະລະຜ້າຫົ່ມບາງຜືນນີ້ແກ່ສົງ" ເມື່ອສະລະແລ້ວ ເພິ່ງສະແດງອາບັດ

ພິກຂຸນີຜູ້ສະຫຼາດສາມາດເພິ່ງຮັບອາບັດ ເພິ່ງຄືນຜ້າຫົ່ມບາງທີ່ທ່ານສະລະໃຫ້ດ້ວຍຍັດຕິກຳວາຈາວ່າ "ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຜ້າຫົ່ມບາງຜືນນີ້ຂອງພິກຂຸນີຊື່ນີ້ເປັນນິດສັກຄີ ທ່ານສະລະແກ່ສົງ ຖ້າສົງພ້ອມກັນແລ້ວເພິ່ງຄືນຜ້າຫົ່ມບາງຜືນນີ້ໃຫ້ແກ່ພິກຂຸນີຊື່ນີ້"

## ສະລະແກ່ຄະນະ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີຫຼາຍອົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີຜູ້ແກ່ພັນສາ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າທັງຫຼາຍ ฯลฯ ຂ້ານ້ອຍຂໍສະລະຜ້າຫົ່ມບາງຜືນນີ້ແກ່ແມ່ເຈົ້າທັງຫຼາຍ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ฯลฯ ເພິ່ງຄືນຜ້າຫົ່ມບາງຜືນນີ້ໃຫ້ແກ່ພິກຂຸນີຊື່ນີ້"

## ສະລະແກ່ບຸກຄົນ

ພິກຂຸນີອົງນັ້ນ ເພິ່ງເຂົ້າໄປຫາພິກຂຸນີອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ฯลฯ ຂ້ານ້ອຍຂໍສະລະຜ້າຫົ່ມບາງຜືນນີ້ແກ່ແມ່ເຈົ້າ" ເມື່ອສະລະແລ້ວເພິ່ງສະແດງອາບັດ

ฯลฯ "ຂ້ານ້ອຍຄືນຜ້າຫົ່ມບາງຜືນນີ້ໃຫ້ແກ່ແມ່ເຈົ້າ"

## ບົດພາຊະນີ

## ຕິກະນິດສັກຄິຍະປາຈິດຕີ

[໗໙໑] ຜ້າຫົ່ມບາງລາຄາເກີນ ໔ ກັງສະເຄິ່ງ ພິກຂຸນີສຳຄັນວ່າເກີນ ຂໍ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຜ້າຫົ່ມບາງລາຄາເກີນ ໔ ກັງສະເຄິ່ງ ພິກຂຸນີບໍ່ແນ່ໃຈ ຂໍ ຕ້ອງອາບັດນິດສັກຄິຍະປາຈິດຕີ

ຜ້າຫົ່ມບາງລາຄາເກີນ ໔ ກັງສະເຄິ່ງ ພິກຂຸນີສຳຄັນວ່າຢ່ອນກວ່າ ຂໍ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ທຸກະທຸກກົດ

ຜ້າຫົ່ມບາງລາຄາຢ່ອນກວ່າ ໔ ກັງສະເຄິ່ງ ພິກຂຸນີສຳຄັນວ່າເກີນ ຕ້ອງອາບັດທຸກກົດ

ຜ້າຫົ່ມບາງລາຄາຍ່ອນກວ່າ ໔ ກັງສະເຄິ່ງ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ຜ້າຫົ່ມບາງລາຄາຍ່ອນກວ່າ ໔ ກັງສະເຄິ່ງ ພິກຂຸນີສຳຄັນວ່າຍ່ອນກວ່າ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໙໔] ໑. ພິກຂຸນີ ຂໍຜ້າຫົ່ມບາງລາຄາ ໔ ກັງສະເຄິ່ງເປັນຢ່າງຫຼາຍ
໒. ພິກຂຸນີ ຂໍຜ້າຫົ່ມບາງລາຄາຍ່ອນກວ່າ ໔ ກັງສະເຄິ່ງ
໓. ພິກຂຸນີ ຂໍຈາກຍາດ
໔. ພິກຂຸນີ ຂໍຈາກຄົນປະວາຣະນາ
໕. ພິກຂຸນີ ຂໍເພື່ອປະໂຫຍດແກ່ຜູ້ອື່ນ
໖. ພິກຂຸນີ ຊື້ມາດ້ວຍຊັບຂອງຕົນ
໗. ພິກຂຸນີ ຈ່າຍຜ້າລາຄາຖືກຕໍ່ທາຍົກຜູ້ຕ້ອງການໃຫ້ຈ່າຍຜ້າລາຄາແພງ
໘. ພິກຂຸນີ ວິກົນຈະລິດ
໙. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑໒ ຈົບ**

## ບົດສະຫຼຸບ

ແມ່ເຈົ້າທັງຫຼາຍ ທຳຄືນິດສັກຄິຍະປາຈິດຕິ ໓໐ ສິກຂາບົດ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ

ຂ້າພະເຈົ້າຂໍຖາມແມ່ເຈົ້າທັງຫຼາຍໃນທຳຄືນິດສັກຄິຍະປາຈິດຕິ ໓໐ ສິກຂາບົດເຫຼົ່ານັ້ນວ່າ "ແມ່ເຈົ້າທັງຫຼາຍບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ແມ່ເຈົ້າທັງຫຼາຍບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ແມ່ເຈົ້າທັງຫຼາຍບໍລິສຸດແລ້ວບໍ?"

ແມ່ເຈົ້າທັງຫຼາຍບໍລິສຸດແລ້ວໃນທຳຄືນິດສັກຄິຍະປາຈິດຕິ ໓໐ ສິກຂາບົດ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

**ນິດສັກຄິຍະກັນໃນພິກຂຸນີວິພັງ ຈົບ**

# ໔. ປາຈິດຕິຍະກັນ

ແມ່ເຈົ້າທັງຫຼາຍ ທຳຄືປາຈິດຕິ ໑໖໖ ສິກຂາບົດເຫຼົ່ານີ້ ມາເຖິງວາລະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບ

## ໑. ລະສຸນະວັກ

## ໝວດວ່າດ້ວຍກະທຽມ

## ສິກຂາບົດທີ ໑

## ວ່າດ້ວຍການຂໍກະທຽມ

## ເລື້ອງພິກຂຸນີຖຸນລະນັນທາ

[໗໙໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ອຸປາສິກາຄົນໜຶ່ງປະວາຣະນາດ້ວຍກະທຽມກັບພິກຂຸນີສົງໄວ້ວ່າ “ຂ້າພະເຈົ້າ ຂໍປະວາຣະນາແມ່ເຈົ້າທັງຫຼາຍທີ່ຕ້ອງການກະທຽມ ດ້ວຍກະທຽມ” ແລະສັ່ງຄົນເຝົ້າໄຮ່ວ່າ “ຖ້າພິກຂຸນີທັງຫຼາຍມາກໍຈົ່ງຖວາຍທ່ານໄປອົງລະ ໔-໕ ກຳ”

ຄັ້ງນັ້ນ ມີມະໂຫລະສົບໃນນະຄອນສາວັດຖີ ກະທຽມທີ່ເຂົານຳມາເກັບໄວ້ໄດ້ໝົດລົງ ພິກຂຸນີທັງຫຼາຍ ເຂົ້າໄປຫາອຸປາສິການັ້ນໄດ້ກ່າວດັ່ງນີ້ວ່າ “ພວກເຮົາຕ້ອງການກະທຽມ”

ອຸປາສິການັ້ນກ່າວວ່າ “ແມ່ເຈົ້າທັງຫຼາຍ ກະທຽມບໍ່ມີ ກະທຽມທີ່ເຂົານຳມາເກັບໄວ້ໝົດແລ້ວ ທ່ານທັງຫຼາຍໂຜດໄປທີ່ໄຮ່”

ພິກຂຸນີຖຸນລະນັນທາໄປທີ່ໄຮ່ແລ້ວ ໃຫ້ນຳກະທຽມໄປເປັນຈຳນວນຫຼາຍໂດຍບໍ່ຮູ້ຈັກປະມານ ຄົນເຝົ້າໄຮ່ຈຶ່ງຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພວກພິກຂຸນີ ຈຶ່ງໄປທີ່ໄຮ່ແລ້ວໃຫ້ນຳກະທຽມໄປເປັນຈຳນວນຫຼາຍໂດຍບໍ່ຮູ້ຈັກປະມານນໍ”

ພິກຂຸນີທັງຫຼາຍ ໄດ້ຍິນຄົນເຝົ້າໄຮ່ຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງໃຫ້ນຳກະທຽມໄປເປັນຈຳນວນຫຼາຍໂດຍບໍ່ຮູ້ຈັກປະມານນໍ” ເມື່ອແລ້ວພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາໃຫ້ນຳກະທຽມໄປເປັນຈຳນວນຫຼາຍໂດຍບໍ່ຮູ້ຈັກປະມານ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໆລໆ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາຈຶ່ງໃຫ້ນຳກະທຽມໄປເປັນຈຳນວນຫຼາຍໂດຍບໍ່ຮູ້ຈັກປະມານນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໄສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສກໍບໍ່ເຫຼື້ອມໃສ ໄປເລີຍ ຄົນທີ່ເຫຼື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ" ເມື່ອຊົງຕຳໜິພິກຂຸນີຖຸນລະນັນທາໂດຍປະການຕ່າງ ໆ ແລ້ວ ຊົງສະແດງທຳມີກະຖາແກ່ພິກຂຸທັງຫຼາຍໃຫ້ເໝາະສົມ ໃຫ້ຄ້ອຍຕາມກັບເລື້ອງນັ້ນ ຮັບສັ່ງກັບພິກຂຸທັງຫຼາຍ ວ່າ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ພິກຂຸນີຖຸນລະນັນທາເຄີຍເປັນພັນລະຍາຂອງພາມຄົນໜຶ່ງ ມີທິດາ ໓ ຄົນ ຊື່ນັນທາ ນັນທະວະດີ ສຸນທະຣີນັນທາ ພິກຂຸທັງຫຼາຍ ຕໍ່ມາພາມນັ້ນຕາຍໄປເກີດເປັນຫົງຕົວໜຶ່ງ ມີຂົນເປັນຄຳລ້ວນ ຫົງນັ້ນມາສະລັດຂົນຄຳໃຫ້ແກ່ທິດາເຫຼົ່ານັ້ນຄົນລະຂົນ ຕໍ່ມາພິກຂຸນີຖຸນລະນັນທາຄິດວ່າ "ຫົງຕົວນີ້ສະລັດຂົນໃຫ້ພວກເຮົາຄົນລະຂົນເທົ່ານັ້ນ" ຈຶ່ງຈັບພະຍາຫົງລົກຂົນຈົນໝົດ ແຕ່ຂົນທີ່ປົ່ງຂຶ້ນໃໝ່ ກາຍເປັນສີຂາວ ໃນຄັ້ງນັ້ນ ພິກຂຸນີຖຸນລະນັນທາເສື່ອມຈາກຄຳຍ້ອນຄວາມໂລບເກີນໄປ ບັດນີ້ກໍເສື່ອມຈາກກະທຽມ ໄດ້ສິ່ງໃດ ຄວນພໍໃຈສິ່ງນັ້ນ ຄວາມໂລບເກີນໄປເປັນຄວາມຊົ່ວຮ້າຍ (ເໝືອນ) ຖຸນລະນັນທາຈັບ ພະຍາຫົງແລ້ວເສື່ອມຈາກຄຳ"

ເມື່ອແລ້ວໃນບັດນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຕຳໜິພິກຂຸນີຖຸນລະນັນທາໂດຍປະການຕ່າງ ໆ ແລ້ວ ຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໘໔] ກໍພິກຂຸນີໃດສັນກະທຽມ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຖຸນລະນັນທາ ຈົບ**

## ສິກຂາບົດວິພັງ

[໗໙໕] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ກະທຽມ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງກະທຽມຊື່ ມາກະທິກະ[1]

ພິກຂຸນີຮັບປະເຄນດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດປາຈິດຕີທຸກ ໆ ຄຳກືນ

## ບົດພາຊະນີ

## ຕິກະປາຈິດຕີ

[໗໙໖] ກະທຽມ ພິກຂຸນີສຳຄັນວ່າເປັນກະທຽມ ສັນ ຕ້ອງອາບັດປາຈິດຕີ
ກະທຽມ ພິກຂຸນີບໍ່ແນ່ໃຈ ສັນ ຕ້ອງອາບັດປາຈິດຕີ
ກະທຽມ ພິກຂຸນີສຳຄັນວ່າບໍ່ແມ່ນກະທຽມ ສັນ ຕ້ອງອາບັດປາຈິດຕີ

## ທຸກະທຸກກົດ

ບໍ່ແມ່ນກະທຽມ ພິກຂຸນີສຳຄັນວ່າເປັນກະທຽມ ສັນ ຕ້ອງອາບັດທຸກກົດ
ບໍ່ແມ່ນກະທຽມ ພິກຂຸນີບໍ່ແນ່ໃຈ ສັນ ຕ້ອງອາບັດທຸກກົດ
ບໍ່ແມ່ນກະທຽມ ພິກຂຸນີສຳຄັນວ່າບໍ່ແມ່ນກະທຽມ ສັນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໙໗] ໑. ພິກຂຸນີ ສັນກະທຽມເຫຼືອງ
໒. ພິກຂຸນີ ສັນກະທຽມແດງ
໓. ພິກຂຸນີ ສັນກະທຽມຂຽວ
໔. ພິກຂຸນີ ສັນກະທຽມຕົ້ນດ່ຽວ
໕. ພິກຂຸນີ ສັນກະທຽມປຸງໃນແກງ
໖. ພິກຂຸນີ ສັນກະທຽມປຸງໃນຊີ້ນ
໗. ພິກຂຸນີ ສັນກະທຽມຈຽວນ້ຳມັນ

໙. ພິກຂຸນີ ສັນກະທຽມປຸງໃນຍຳຜັກສົດ
໙. ພິກຂຸນີ ສັນກະທຽມປຸງໃນແກງອ່ອມ
໑໐. ພິກຂຸນີ ວິກັບຈະລິດ
໑໑. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑ ຈົບ**

# ໑. ລະສຸນະວັກ

## ສິກຂາບົດທີ ໔
## ວ່າດ້ວຍການລົກຂົນໃນທີ່ແຄບ
## ເລື່ອງພິກຂຸນີສັບພັກຄີ

[ກຸ໙໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີສັບພັກຄີໃຫ້ລົກຂົນໃນທີ່ແຄບເປືອຍກາຍອາບນ້ຳທ່າດຽວກັນກັບພວກຍິງແພດສະຫຍາໃນແມ່ນ້ຳອະຈິຣະວະດີ ພວກຍິງແພດສະຫຍາຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງໃຫ້ລົກຂົນໃນທີ່ແຄບເໝືອນແມ່ຍິງຄະລືຫັດຜູ້ບໍລິໂພກກາມນໍ"

ພິກຂຸນີທັງຫຼາຍໄດ້ຍິນພວກຍິງແພດສະຫຍາຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີ ສັບພັກຄີຈຶ່ງໃຫ້ລົກຂົນໃນທີ່ແຄບນໍ" ເມື່ອແລ້ວພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີໃຫ້ລົກຂົນໃນທີ່ແຄບ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງໃຫ້ລົກຂົນໃນທີ່ແຄບນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີ ທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໙໙] ກໍພິກຂຸນີໃດ ໃຫ້ລົກຂົນໃນທີ່ແຄບ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີສັບພັກຄີ ຈົບ**

## ສິກຂາບົດວິພັງ

[໘໐໐] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ທີ່ແຄບ ຄື ຂີ້ແຮ້ທັງ ໒ ຂ້າງ ບໍລິເວນອົງກຳເນີດ

ຄຳວ່າ ໃຫ້ລົກ ຄື ໃຫ້ລົກຂົນແມ່ນເສັ້ນດຽວ ຕ້ອງອາບັດປາຈິດຕີ ໃຫ້ລົກຂົນຫຼາຍເສັ້ນຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໘໐໑] ໑. ພິກຂຸນີລົກຂົນຍ້ອນອາພາດເປັນເຫດ[១]

໒. ພິກຂຸນີວິກົນຈະລິດ

໓. ພິກຂຸນີຕົ້ນບັນຍັດ

**ສິກຂາບົດທີ ໒ ຈົບ**

# ໑. ລະສຸນະວັກ

## ສິກຂາບົດທີ ໓

## ວ່າດ້ວຍການສຳຜັດອົງກຳເນີດ

## ເລື້ອງພິກຂຸນີ ໒ ອົງ

[໘໐໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີ ໒ ອົງຖືກຄວາມບໍ່ຍິນດີບີບຄັ້ນ ຈຶ່ງເຂົ້າໄປສູ່ຫ້ອງຊັ້ນໃນແລ້ວໃຊ້ຝາມືຕົບອົງກຳເນີດກັນ ພິກຂຸນີທັງຫຼາຍພາກັນແລ່ນເຂົ້າ

ໄປຕາມສຽງນັ້ນແລ້ວ ໄດ້ກ່າວກັບພິກຂຸນີທັງ ໔ ອົງນັ້ນດັ່ງນີ້ວ່າ "ແມ່ເຈົ້າ ເປັນຫຍັງ ພວກທ່ານຈຶ່ງເຮັດບໍ່ດີກັບຊາຍນໍ"

ພິກຂຸນີທັງສອງຕອບວ່າ "ພວກເຮົາບໍ່ໄດ້ເຮັດບໍ່ດີກັບຊາຍ" ແລ້ວເລົ່າເລື່ອງນັ້ນ ໃຫ້ພິກຂຸນີທັງຫຼາຍຮູ້

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີທັງຫຼາຍຈຶ່ງໃຊ້ມືຕົບອົງກຳເນີດກັນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກ ໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີທັງຫຼາຍໃຊ້ຝາມືຕົບອົງກຳເນີດກັນ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີທັງຫຼາຍຈຶ່ງໃຊ້ຝາມືຕົບອົງກຳເນີດກັນແນວນັ້ນນໍ? ພິກຂຸທັງຫຼາຍ ການເຮັດແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໗໐໓] ພິກຂຸນີ ຕ້ອງອາບັດປາຈິດຕີ ຍ້ອນໃຊ້ຝາມືຕົບອົງກຳເນີດ

### ເລື້ອງພິກຂຸນີ ໔ ອົງ ຈົບ

## ສິກຂາບົດວິພັງ

[໗໐໔] ທີ່ຊື່ວ່າ ໃຊ້ຝາມືຕົບອົງກຳເນີດ ຄື ພິກຂຸນີຍິນດີການສຳຜັດ ໂດຍທີ່ສຸດໃຊ້ກີບບົວຕີທີ່ອົງກຳເນີດ ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໐໕] ໑. ພິກຂຸນີ ສຳຜັດຍ້ອນອາພາດເປັນເຫດ

໔. ພິກຂຸນີ ວິກົນຈະລິດ

໓. ພິກຂຸນີ ຕົ້ນບັນຍັດ

### ສິກຂາບົດທີ ໓ ຈົບ

# ໑. ລະສຸນະວັກ

## ສິກຂາບົດທີ ໔

### ວ່າດ້ວຍການໃຊ້ທ່ອນຢາງ

### ເລື້ອງພິກຂຸນີອົງໜຶ່ງ

[໗໐໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ອະດີດນາງສະໜົມຂອງພຣະຣາຊາໄປບວດ ຢູ່ໃນສຳນັກພິກຂຸນີ ພິກຂຸນີອົງໜຶ່ງຖືກຄວາມບໍ່ຍິນດີຍິ່ງບີບຄັ້ນ ຈຶ່ງເຂົ້າໄປຫາພິກຂຸນີ (ຜູ້ເຄີຍເປັນນາງສະໜົມ)ນັ້ນເຖິງທີ່ຢູ່ ເມື່ອເຖິງແລ້ວ ໄດ້ກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ “ແມ່ເຈົ້າ ພຣະຣາຊາສະເດັດໄປຫາທ່ານດົນ ໆ ຄັ້ງ ທ່ານທົນຢູ່ໄດ້ຢ່າງໃດ”

ພິກຂຸນີນັ້ນຕອບວ່າ “ແມ່ເຈົ້າ ເຮົາໃຊ້ທ່ອນຢາງ”
ພິກຂຸນີນັ້ນຖາມວ່າ “ແມ່ເຈົ້າ ທ່ອນຢາງນີ້ເປັນຢ່າງໃດ”

ລຳດັບນັ້ນ ພິກຂຸນີຜູ້ເຄີຍເປັນນາງສະໜົມບອກທ່ອນຢາງແກ່ພິກຂຸນີນັ້ນ ຕໍ່ມາພິກຂຸນີນັ້ນໃຊ້ທ່ອນຢາງແລ້ວລືມລ້າງວາງຖິ້ມໄວ້ໃນທີ່ແຫ່ງໜຶ່ງ ພິກຂຸນີທັງຫຼາຍເຫັນທ່ອນຢາງມີແມງວັນຕອມຈຶ່ງຖາມວ່າ “ນີ້ເປັນການກະທຳຂອງໃຜ”

ພິກຂຸນີນັ້ນ ກ່າວແນວນີ້ວ່າ “ນີ້ເປັນການກະທຳຂອງຂ້ານ້ອຍເອງ”
ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພິກຂຸນີຈຶ່ງໃຊ້ທ່ອນຢາງນໍ” ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີໃຊ້ທ່ອນຢາງ ແມ່ນບໍ?” ພິກຂຸທັງຫຼາຍທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງໃຊ້ທ່ອນຢາງນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

### ພຣະບັນຍັດ

[໘໐໗] ພິກຂຸນີຕ້ອງອາບັດປາຈິດຕິ ຍ້ອນໃຊ້ທ່ອນຢາງ

#### ເລື້ອງພິກຂຸນີອົງໜຶ່ງ ຈົບ

### ສິກຂາບົດວິພັງ

[໘໐໘] ທີ່ຊື່ວ່າ ທ່ອນຢາງ ໄດ້ແກ່ ສິ່ງທີ່ເຮັດດ້ວຍຢາງ ທ່ອນຢາງທີ່ເຮັດດ້ວຍໄມ້ ທ່ອນຢາງທີ່ເຮັດດ້ວຍແປ້ງ ທ່ອນຢາງທີ່ເຮັດດ້ວຍດິນ ພິກຂຸນີຍິນດີການສໍາຜັດໂດຍທີ່ສຸດແມ່ນສອດກີບອຸບົນເຂົ້າອົງກໍາເນີດ ຕ້ອງອາບັດປາຈິດຕິ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໘໐໙] ໑. ພິກຂຸນີ ໃຊ້ທ່ອນຢາງຍ້ອນອາພາດເປັນເຫດ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

#### ສິກຂາບົດທີ ໔ ຈົບ

# ໑. ລະສຸນະວັກ

## ສິກຂາບົດທີ ໕

### ວ່າດ້ວຍການໃຊ້ນໍ້າຊໍາຣະ

### ເລື້ອງພຣະນາງມະຫາປະຊາບໍດີໂຄຕະມີ

[໘໑໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນນິໂຄທາຣາມ ເຂດ ເມືອງກະບິນລະພັດ ແຄວັ້ນສັກກະ ຄັ້ງນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຖິງທີ່ປະທັບ ເມື່ອເຖິງແລ້ວ ຖວາຍອະພິວາດແລ້ວຢືນໃນທີ່ໃຕ້ລົມ ຂາບທູນວ່າ "ຂ້າແຕ່ພຣະຜູ້ມີພຣະພາກເຈົ້າມາຕຸຄາມກິ່ນບໍ່ດີ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸນີທັງຫຼາຍ ຈົ່ງໃຊ້ນໍ້າຊໍາຣະທໍາຄວາມສະອາດ" ຊົງຊີ້ແຈ່ງໃຫ້ພຣະນາງມະຫາປະຊາບໍດີໂຄຕະມີເຫັນແຈ້ງ ຊວນໃຫ້ຍາກຮັບເອົາໄປ

ປະຕິບັດ ຊຸກຍູ້ໃຈໃຫ້ ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ລຳດັບນັ້ນ ພຣະນາງ ມະຫາປະຊາບໍດີໂຄຕະມີຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວ ຖວາຍ ອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ

ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຊຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີໃຊ້ນ້ຳຊຳຣະທຳຄວາມສະອາດໄດ້"

**ເລື້ອງພຣະນາງມະຫາປະຊາບໍດີໂຄຕະມີ ຈົບ**

## ເລື້ອງພິກຂຸນີອົງໜຶ່ງ

ສະໄໝນັ້ນ ພິກຂຸນີອົງໜຶ່ງຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດນ້ຳຊຳຣະທຳຄວາມສະອາດ" ຈຶ່ງໃຊ້ນ້ຳຊຳຣະທຳຄວາມສະອາດເລິກເກີນໄປ ເຮັດໃຫ້ເກີດບາດຂຶ້ນທີ່ອົງກຳເນີດ ຄັ້ງນັ້ນ ທ່ານບອກເລື້ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີໃຊ້ນ້ຳຊຳຣະທຳຄວາມສະອາດເລິກເກີນ ໄປນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນັ້ນເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີໃຊ້ນ້ຳຊຳຣະທຳຄວາມສະອາດເລິກເກີນໄປ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງໃຊ້ນ້ຳຊຳຣະທຳຄວາມສະອາດເລິກເກີນໄປນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໘໑໑] ກໍພິກຂຸນີຜູ້ຈະໃຊ້ນ້ຳຊຳຣະທຳຄວາມສະອາດ ເພິ່ງໃຊ້ນ້ຳຊຳຣະທຳຄວາມສະອາດເລິກພຽງ ໔ ຂໍ້ອົງຄຸລີເປັນຢ່າງຫຼາຍ ໃຫ້ເກີນກຳນົດນັ້ນ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີອົງໜຶ່ງ ຈົບ**

## ສິກຂາບົດວິພັງ

[໗໑໔] ທີ່ຊື່ວ່າ ນ້ຳຊຳຣະທຳຄວາມສະອາດ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງນ້ຳຊຳຣະບໍລິເວນອົງກຳເນີດ

ຄຳວ່າ ຜູ້ຈະໃຊ້ ຄື ຜູ້ລ້າງ

ຄຳວ່າ ເພິ່ງໃຊ້ນ້ຳຊຳຣະທຳຄວາມສະອາດເລິກພຽງ ໔ ຂໍ້ ອົງຄຸລີ ເປັນຢ່າງຫຼາຍ ຄືໃຊ້ນ້ຳຊຳຣະເລິກໄດ້ພຽງ ໔ ຂໍ້ໃນ ໔ ອົງຄຸລີເປັນຢ່າງຫຼາຍ

ຄຳວ່າ ໃຫ້ເກີນກຳນົດນັ້ນ ຄວາມວ່າ ພິກຂຸນີຍິນດີການສຳຜັດໃຫ້ລ່ວງເລີຍເຂົ້າໄປໂດຍທີ່ສຸດພຽງປາຍເສັ້ນຜົມ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[໗໑໕] ເກີນ ໔ ຂໍ້ອົງຄຸລີ ພິກຂຸນີສຳຄັນວ່າເກີນ ຊຳຣະ ຕ້ອງອາບັດປາຈິດຕີ
ເກີນ ໔ ຂໍ້ອົງຄຸລີ ພິກຂຸນີບໍ່ແນ່ໃຈ ຊຳຣະ ຕ້ອງອາບັດປາຈິດຕີ
ເກີນ ໔ ຂໍ້ອົງຄຸລີ ພິກຂຸນີສຳຄັນວ່າຢ່ອນກວ່າ ຊຳຣະ ຕ້ອງອາບັດປາຈິດຕີ

### ທຸກະທຸກກົດ

ຢ່ອນກວ່າ ໔ ຂໍ້ອົງຄຸລີ ພິກຂຸນີສຳຄັນວ່າເກີນ ຕ້ອງອາບັດທຸກກົດ
ຢ່ອນກວ່າ ໔ ຂໍ້ອົງຄຸລີ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ຢ່ອນກວ່າ ໔ ຂໍ້ອົງຄຸລີ ພິກຂຸນີສຳຄັນວ່າຢ່ອນກວ່າ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໑໔] ໑. ພິກຂຸນີຊຳຣະເລິກພຽງ ໔ ຂໍ້ອົງຄຸລີເປັນຢ່າງຫຼາຍ
໔. ພິກຂຸນີຊຳຣະເລິກບໍ່ເຖິງ ໔ ຂໍ້ອົງຄຸລີ
໓. ພິກຂຸນີຊຳຣະເລິກເກີນຍ້ອນອາພາດເປັນເຫດ
໔. ພິກຂຸນີວິກົນຈະລິດ
໕. ພິກຂຸນີຕົ້ນບັນຍັດ

**ສິກຂາບົດທີ ໕ ຈົບ**

# ໑. ລະສຸນະວັກ

## ສິກຂາບົດທີ ໖

## ວ່າດ້ວຍການປີນນິບັດ

## ເລື້ອງພິກຂຸນີອະດີດພັນລະຍາມະຫາອຳໝາດ

[໗໑໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ມະຫາອຳໝາດຊື່ອາໂຣຫັນຕະບວດ ໃນສຳນັກພິກຂຸ ອະດີດພັນລະຍາຂອງທ່ານບວດໃນສຳນັກພິກຂຸນີ ຕໍ່ມາ ພິກຂຸນັ້ນຮ່ວມສັນ ພັດຕາຫານໃນສຳນັກຂອງພິກຂຸນີນັ້ນ ຂະນະທີ່ທ່ານກຳລັງສັນ ພິກຂຸນີນັ້ນເຂົ້າໄປຢືນປີນນິບັດຢູ່ໃກ້ ໆ ດ້ວຍນ້ຳສັນແລະການພັດວີ ເວົ້າກ່ຽວກັບເລື້ອງຄອບຄົວ ເວົ້າຫຼາຍເກີນໄປ ລຳດັບນັ້ນ ພິກຂຸນັ້ນຈຶ່ງຕໍ່ວ່າພິກຂຸນີນັ້ນວ່າ "ນາງຢ່າໄດ້ເຮັດຢ່າງນີ້ ເລື້ອງນີ້ບໍ່ສົມຄວນ"

ພິກຂຸນີນັ້ນ ກ່າວວ່າ "ເມື່ອກ່ອນທ່ານເຮັດຢ່າງນີ້ ໆ ກັບຂ້ານ້ອຍ ບັດນີ້ ພຽງເທົ່ານີ້ ກໍທົນບໍ່ໄດ້" ຈຶ່ງຂວ້ຳໂອນ້ຳລົງເທິງຫົວແລ້ວໃຊ້ພັດຕີ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງຕີພິກຂຸນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຕີພິກຂຸ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ວ່າ "ຯລຯ ພິກຂຸທັງຫຼາຍເປັນຫຍັງ ພິກຂຸນີຈຶ່ງຕີພິກຂຸນໍ ພິກຂຸທັງຫຼາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໑໖] ກໍພິກຂຸນີໃດ ປີນນິບັດພິກຂຸຜູ້ກຳລັງສັນຢູ່ດ້ວຍນ້ຳດື່ມ ຫຼື ດ້ວຍການພັດວີ ຕ້ອງອາບັດປາຈິດຕີ

**ເລື້ອງອະດີດພັນລະຍາຂອງມະຫາອຳໝາດ ຈົບ**

## ສິກຂາບົດວິພັງ

[໗໑໗] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ພິກຂຸນີນີ້ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ພິກຂຸ ຄື ອຸປະສຳບັນ

ຄຳວ່າ ຜູ້ກຳລັງສັນຢູ່ ຄື ຜູ້ກຳລັງສັນໂພຊະນະ ໕ ຢ່າງໃດຢ່າງໜຶ່ງ

ທີ່ຊື່ວ່າ ນ້ຳດື່ມ ໄດ້ແກ່ ນ້ຳດື່ມຊະນິດໃດຊະນິດໜຶ່ງ

ທີ່ຊື່ວ່າ ການພັດວີ ໄດ້ແກ່ ພັດຊະນິດໃດຊະນິດໜຶ່ງ

ຄຳວ່າ ຢືນນີບັດຢູ່ ຄວາມວ່າ ຢືນຢູ່ໃນໄລຍະຫັດຖະບາດ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໗໑໘] ອຸປະສຳບັນ[໑] ພິກຂຸນີສຳຄັນວ່າເປັນອຸປະສຳບັນ ຢືນນີບັດຢູ່ດ້ວຍນ້ຳດື່ມ ຫຼື ການພັດວີ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸນີບໍ່ແນ່ໃຈ ຢືນນີບັດຢູ່ດ້ວຍນ້ຳດື່ມ ຫຼື ການພັດວີ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ຢືນນີບັດຢູ່ດ້ວຍນ້ຳດື່ມຫຼືການພັດວີ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸນີຢືນນີບັດຢູ່ນອກຫັດຖະບາດ ຕ້ອງອາບັດທຸກກົດ

ພິກຂຸກຳລັງຫຍ້ຳຂອງຫຍ້ຳ ພິກຂຸນີເຂົ້າໄປຢືນນີບັດ ຕ້ອງອາບັດທຸກກົດ

ພິກຂຸນີເຂົ້າໄປຢືນນີບັດອະນຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໑໙] ໑. ພິກຂຸນີ ຖວາຍ
໔. ພິກຂຸນີ ໃຫ້ຄົນອື່ນຖວາຍ
໓. ພິກຂຸນີ ສັ່ງອະນຸປະສຳປັນໃຫ້ປົນນິບັດ
໔. ພິກຂຸນີ ວິກົນຈະລິດ
໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໓ ຈົບ**

# ໑. ລະສຸນະວັກ

## ສິກຂາບົດທີ ໆ

## ວ່າດ້ວຍການຂໍເຂົ້າເປືອກດິບ

## ເລື່ອງພິກຂຸນີຫຼາຍອົງ

[໗໔໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ໃນລະດູເກັບກ່ຽວ ພວກພິກຂຸນີອອກປາກຂໍເຂົ້າເປືອກດິບ ນຳໄປໃນເມືອງ ພໍເຖິງປະຕູເມືອງ ພວກຄົນເຝົ້າປະຕູກັກຕົວ ໄວ້ໂດຍກ່າວວ່າ "ແມ່ເຈົ້າ ທ່ານທັງຫຼາຍໂຜດໃຫ້ສ່ວນແບ່ງແດ່" ແລ້ວປ່ອຍໄປ ເມື່ອກັບເຖິງສຳນັກໄດ້ບອກເລື່ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງອອກປາກຂໍເຂົ້າເປືອກດິບນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີອອກປາກຂໍເຂົ້າເປືອກດິບແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີຈຶ່ງອອກປາກຂໍເຂົ້າເປືອກດິບ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໔໑] ກໍພິກຂຸນີໃດອອກປາກຂໍຫຼືໃຊ້ໃຫ້ອອກປາກຂໍ ຂົ້ວຫຼືໃຊ້ໃຫ້ຂົ້ວ ຕຳຫຼືໃຊ້ໃຫ້ຕຳ ຫຸງ ຫຼື ໃຊ້ໃຫ້ຫຸງເຂົ້າເປືອກດິບແລ້ວສັນ ຕ້ອງອາບັດປາຈິດຕິ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໗໔໔] ຄຳວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໆລໆ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ເຂົ້າເປືອກດິບ ໄດ້ແກ່ ເຂົ້າສາລີ ເຂົ້າຈ້າວ ເຂົ້າໜຽວ ເຂົ້າລະມານ ເຂົ້າຟ່າງ ໝາກເດືອຍ ຫຍ້າກັບແກ້

ຄຳວ່າ ອອກປາກຂໍ ຄື ອອກປາກຂໍເອງ

ຄຳວ່າ ໃຊ້ໃຫ້ອອກປາກຂໍ ຄື ໃຊ້ຜູ້ອື່ນໃຫ້ອອກປາກຂໍ

ຄຳວ່າ ຂົ້ວ ຄື ຂົ້ວເອງ

ຄຳວ່າ ໃຊ້ໃຫ້ຂົ້ວ ຄື ໃຊ້ຜູ້ອື່ນໃຫ້ຂົ້ວ

ຄຳວ່າ ຕຳ ຄື ຕຳເອງ

ຄຳວ່າ ໃຊ້ໃຫ້ຕຳ ຄື ໃຊ້ຜູ້ອື່ນໃຫ້ຕຳ

ຄຳວ່າ ຫຸງ ຄື ຫຸງເອງ

ຄຳວ່າ ໃຊ້ໃຫ້ຫຸງ ຄື ໃຊ້ຜູ້ອື່ນໃຫ້ຫຸງ

ພິກຂຸນີຮັບປະເຄນ ດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດປາຈິດຕິທຸກ ໆ ຄຳກືນ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໔໓] ໑. ພິກຂຸນີ ອອກປາກຂໍເຂົ້າມາສັນຍ້ອນເຫດຜົນຄືອາພາດ

໒. ພິກຂຸນີ ອອກປາກຂໍອະປະຣັນຊາດ[๑]

໓. ພິກຂຸນີ ວິກົນຈະລິດ

໔. ພິກຂຸນີ ຕົ້ນບັນຍັດ

### ສິກຂາບົດທີ ໗ ຈົບ

# ໑. ລະສຸນະວັກ

## ສິກຂາບົດທີ ໗

## ວ່າດ້ວຍການຖິ້ມອຸດຈາຣະເປັນຕົ້ນພາຍນອກຝາ

### ເລື້ອງພາມຄົນໜຶ່ງ

[໗໔໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພາມຄົນໜຶ່ງໄດ້ຮັບແຕ່ງຕັ້ງໃຫ້ເປັນຜູ້ເກັບສ່ວຍສິ່ງຫຼວງ[១] ຄິດວ່າ "ເຮົາຈັກທູນຂໍຕຳແໜ່ງນາຍດ່ານນັ້ນ" ຈຶ່ງອາບນ້ຳ ແລ້ວຍ່າງໄປຣາດຊະສຳນັກ ຜ່ານທີ່ຢູ່ພິກຂຸນີ ພິກຂຸນີອົງໜຶ່ງຖ່າຍອຸດຈາຣະລົງໃນໝໍ້ແລ້ວຖອກຖິ້ມພາຍນອກຝາຮົດລົງໃສ່ຫົວຂອງພາມນັ້ນພໍດີ ພາມນັ້ນຕຳໜິ ປະນາມ ໂພນທະນາວ່າ "ແມ່ຍິງຊົ່ວຫົວໂລ້ນພວກນີ້ບໍ່ແມ່ນສະມະນະຍິງ ເປັນຫຍັງ ຈຶ່ງຖອກໝໍ້ຄູດລົງໃສ່ຫົວຂອງເຮົາ ເຮົາຈັກເຜົາສຳນັກພວກນາງ" ຖືຄົບເພີງເຂົ້າໄປສຳນັກພິກຂຸນີ

ອຸບາສິກາຄົນໜຶ່ງກຳລັງອອກຈາກສຳນັກພິກຂຸນີ ໄດ້ເຫັນພາມນັ້ນຖືຄົບເພີງຍ່າງເຂົ້າໄປສູ່ສຳນັກ ຈຶ່ງໄດ້ກ່າວກັບພາມນັ້ນດັ່ງນີ້ວ່າ "ເປັນຫຍັງ ທ່ານຈຶ່ງຖືຄົບເພີງໄປສຳນັກພິກຂຸນີນໍ"

ພາມນັ້ນກ່າວວ່າ "ແມ່ຍິງຊົ່ວຫົວໂລ້ນພວກນີ້ຖອກໝໍ້ຄູດລົງໃສ່ຫົວຂອງເຮົາ ເຮົາຈັກເຜົາສຳນັກພວກນາງ"

ອຸບາສິກາກ່າວວ່າ "ກັບເທີ້ນ ພາມຜູ້ຈະເລີນ ເຫດການນີ້ຈັດວ່າເປັນມົງຄົນຂອງທ່ານ ໆ ຈະໄດ້ຊັບ ໑,໐໐໐ ແລະຈະໄດ້ຕຳແໜ່ງນາຍດ່ານນັ້ນ"

ພາມນັ້ນອາບນ້ຳແລ້ວເຂົ້າໄປສູ່ຣາດຊະສຳນັກ ໄດ້ຊັບ ໑,໐໐໐ ແລະໄດ້ຕຳແໜ່ງນາຍດ່ານນັ້ນ

ຄັ້ງນັ້ນ ອຸບາສິການັ້ນກັບເຂົ້າໄປສຳນັກ ແຈ້ງເລື້ອງນັ້ນແກ່ພິກຂຸນີທັງຫຼາຍແລ້ວບໍຣິພາດ[២]

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີທັງຫຼາຍຈຶ່ງຖອກອຸດຈາຣະພາຍນອກຝານໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີຖອກອຸດຈາຣະນອກຝາ

ແມ່ນບໍ?" ພິກຂຸທັງຫຼາຍ ທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີຈຶ່ງຖອກອຸດຈາຣະນອກຝາແນວນັ້ນນໍ? ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໘໕] ກໍພິກຂຸນີໃດ ຖອກ ຫຼື ໃຊ້ໃຫ້ຖອກອຸດຈາຣະ ຫຼື ປັດສາວະ ມູນຝອຍ ຫຼື ຂອງເປັນເດື່ອນພາຍນອກຝາ ຫຼື ພາຍນອກກຳແພງ ຕ້ອງອາບັດປາຈິດຕີ

## ເລື່ອງພາມຄົນໜຶ່ງ ຈົບ

ສິກຂາບົດວິພັງ

[໗໘໖] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ອຸດຈາຣະ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຄູດ

ທີ່ຊື່ວ່າ ປັດສາວະ ຕັດໝາຍເຖິງມູດ

ທີ່ຊື່ວ່າ ມູນຝອຍ ຕັດໝາຍເຖິງຂີ້ເຫຍື້ອມູນຝອຍ

ທີ່ຊື່ວ່າ ຂອງເປັນເດື່ອນ ຕັດໝາຍເຖິງອາມິດທີ່ເປັນເດື່ອນ ກະດູກເປັນເດື່ອນຫຼືນ້ຳເປັນເດື່ອນ

ທີ່ຊື່ວ່າ ຝາ ໄດ້ແກ່ ຝາ ໓ ຊະນິດ ຄື (໑) ຝາດິນຈີ່ (໒) ຝາແຜ່ນສິລາ (໓) ຝາໄມ້

ທີ່ຊື່ວ່າ ກຳແພງ ໄດ້ແກ່ ກຳແພງ ໓ ຊະນິດ ຄື (໑) ກຳແພງດິນຈີ່ (໒) ກຳແພງສິລາ (໓) ກຳແພງໄມ້

ຄຳວ່າ ພາຍນອກຝາ ຄື ອີກດ້ານໜຶ່ງຂອງຝາ

ຄຳວ່າ ພາຍນອກກຳແພງ ຄື ອີກດ້ານໜຶ່ງຂອງກຳແພງ

ຄຳວ່າ ຖອກ ຄື ຖອກເອງ ຕ້ອງອາບັດປາຈິດຕີ

ຄຳວ່າ ໃຊ້ໃຫ້ຖອກ ຄື ໃຊ້ຜູ້ອື່ນໃຫ້ຖອກ ຕ້ອງອາບັດທຸກກົດ ຜູ້ຮັບຄຳສັ່ງຄັ້ງດຽວແຕ່ຖອກຫຼາຍຄັ້ງ ພິກຂຸນີຜູ້ສັ່ງ ຕ້ອງອາບັດປາຈິດຕີ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໔໓] ໑. ພິກຂຸນີ ແນມເບິ່ງກ່ອນແລ້ວຈຶ່ງຖອກ
໔. ພິກຂຸນີ ຖອກໃນທີ່ທີ່ເຂົາບໍ່ໃຊ້ສັນຈອນ
໕. ພິກຂຸນີ ວິກົນຈະລິດ
໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ໑. ລະສຸນະວັກ

## ສິກຂາບົດທີ ໘

### ວ່າດ້ວຍການຖິ້ມອຸດຈາຣະເປັນຕົ້ນພາຍນອກກຳແພງ

### ເລື້ອງພິກຂຸນີຫຼາຍອົງ

[໗໔໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພາມຄົນໜຶ່ງມີນາເຂົ້າໜຽວ ແປງໜຶ່ງຢູ່ຕິດກັບສຳນັກພິກຂຸນີ ພວກພິກຂຸນີຖອກອຸດຈາຣະແດ່ ປັດສາວະແດ່ ຂີ້ເຫຍື່ອແດ່ ຂອງເປັນເງື່ອນແດ່ ຖິ້ມລົງໃນນາເຂົ້າໜຽວ (ຂອງພາມນັ້ນ) ພາມຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີ ຈຶ່ງເຮັດນາເຂົ້າໜຽວຂອງເຮົາໃຫ້ເສຍຫາຍນໍ"

ພິກຂຸນີທັງຫຼາຍໄດ້ຍິນພາມນັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຖອກອຸດຈາຣະແດ່ ປັດສາວະແດ່ ມູນຝອຍແດ່ ຂອງເປັນເງື່ອນແດ່ ລົງເທິງຂອງຂຽວນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີຖອກອຸດຈາຣະແດ່

ປັດສາວະແດ່ ມູນຝອຍແດ່ ຂອງເປັນເດນແດ່ ລົງເທິງຂອງຂຽວ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີຈຶ່ງຖອກອຸດຈາຣະແດ່ ປັດສາວະແດ່ ມູນຝອຍແດ່ ຂອງເປັນເດນແດ່ ລົງເທິງຂອງຂຽວ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໘໙] ກໍພິກຂຸນີໃດ ຖອກ ຫຼື ໃຊ້ໃຫ້ຖອກອຸດຈາຣະ ຫຼື ປັດສາວະ ມູນຝອຍ ຫຼື ຂອງເປັນເດນລົງເທິງຂອງຂຽວ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໗໙໐] ຄຳວ່າ ກໍ ฯລฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ฯລฯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ฯລฯ ນີ້ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ ອຸດຈາຣະ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຄູດ

ທີ່ຊື່ວ່າ ປັດສາວະ ຕັດໝາຍເຖິງມູດ

ທີ່ຊື່ວ່າ ມູນຝອຍ ຕັດໝາຍເຖິງຂີ້ເຫຍື້ອມູນຝອຍ

ທີ່ຊື່ວ່າ ຂອງເປັນເດນ ຕັດໝາຍເຖິງອາມິດທີ່ເປັນເດນ ກະດູກເປັນເດນຫຼືນ້ຳເປັນເດນ

ທີ່ຊື່ວ່າ ຂອງຂຽວ ໄດ້ແກ່ ບຸບພັນຊາດ ອະປະຣັນຊາດ°ທີ່ເຂົາປູກໄວ້ສຳລັບ ອຸປະໂພກບໍຣິໂພກ

ຄຳວ່າ ຖອກ ຄື ຖອກເອງ ຕ້ອງອາບັດປາຈິດຕີ

ຄຳວ່າ ໃຊ້ໃຫ້ຖອກ ຄື ໃຊ້ຜູ້ອື່ນໃຫ້ຖອກ ຕ້ອງອາບັດທຸກກົດ ຜູ້ຮັບຄຳສັ່ງຄັ້ງດຽວແຕ່ຖອກຫຼາຍຄັ້ງ ພິກຂຸນີຜູ້ສັ່ງຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[໗໙໑] ຂອງຂຽວ ພິກຂຸນີສຳຄັນວ່າເປັນຂອງຂຽວຖອກ ຫຼື ໃຊ້ໃຫ້ຖອກ ຕ້ອງອາບັດປາຈິດຕີ

ຂອງຊຽວ ພິກຂຸນີບໍ່ແນ່ໃຈ ຖອກ ຫຼື ໃຊ້ໃຫ້ຖອກ ຕ້ອງອາບັດປາຈິດຕິ
ຂອງຊຽວ ພິກຂຸນີສຳຄັນວ່າບໍ່ແມ່ນຂອງຊຽວ ຖອກ ຫຼື ໃຊ້ໃຫ້ຖອກ ຕ້ອງອາບັດປາຈິດຕິ

**ທຸກະທຸກກົດ**

ບໍ່ແມ່ນຂອງຊຽວ ພິກຂຸນີສຳຄັນວ່າເປັນຂອງຊຽວຖອກຫຼືໃຊ້ໃຫ້ຖອກ ຕ້ອງອາບັດທຸກກົດ
ບໍ່ແມ່ນຂອງຊຽວ ພິກຂຸນີບໍ່ແນ່ໃຈ ຖອກ ຫຼື ໃຊ້ໃຫ້ຖອກ ຕ້ອງອາບັດທຸກກົດ
ບໍ່ແມ່ນຂອງຊຽວ ພິກຂຸນີສຳຄັນວ່າບໍ່ແມ່ນຂອງຊຽວ ຖອກ ຫຼື ໃຊ້ໃຫ້ຖອກ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໓໔] ໑. ພິກຂຸນີ ແນມເບິ່ງກ່ອນແລ້ວຈຶ່ງຖອກ
໒. ພິກຂຸນີ ຖອກເທິງຄັນນາ
໓. ພິກຂຸນີ ບອກເຈົ້າຂອງກ່ອນແລ້ວຈຶ່ງຖອກ
໔. ພິກຂຸນີ ວິກົນຈະລິດ
໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໙ ຈົບ**

# ໑. ລະສຸນະວັກ

## ສິກຂາບົດທີ ໑໐

## ວ່າດ້ວຍການເບິ່ງການຂັບຮ້ອງຟ້ອນລຳ

## ເລື້ອງພິກຂຸນີສັບພັກຄີ

[໗໓໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອແກ່ກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ມີງານມະໂຫລະສົບເທິງຍອດເຂົາ ພວກພິກຂຸນີສັບພັກຄີພາກັນໄປເບິ່ງມະໂຫລະສົບເທິງຍອດເຂົາ ພວກຊາວບ້ານຈຶ່ງຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພວກພິກຂຸນີຈຶ່ງໄປເບິ່ງການຟ້ອນລຳແດ່ ການຂັບຮ້ອງແດ່ ການເສບດົນຕີແດ່ ເໝືອນແມ່ຍິງຄະລືຫັດ ຜູ້ບໍຣິໂພກກາມນໍ”

ພິກຂຸນີທັງຫຼາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີສັບພັກຄີຈຶ່ງໄປເບິ່ງການຟ້ອນລຳແດ່ ການຂັບຮ້ອງແດ່ ການເສບດົນຕີແດ່ ເໝືອນແມ່ຍິງຄະລິຫັດຜູ້ບໍຣິໂພກກາມນໍ" ເມື່ອແລ້ວພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ພຣະພາກຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີໄປເບິ່ງການຟ້ອນລຳແດ່ ການຂັບຮ້ອງແດ່ ການເສບດົນຕີແດ່ ແມ່ນບໍ?" ພິກຂຸທັງຫຼາຍທູນ ຮັບວ່າ "ແມ່ນ ໂດຍຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸ ທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງໄປເບິ່ງການຟ້ອນລຳແດ່ ການຂັບຮ້ອງແດ່ ການເສບດົນຕີ ແດ່ນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໓໔] ກໍພິກຂຸນີໃດ ໄປເບິ່ງການຟ້ອນລຳ ການຂັບຮ້ອງ ຫຼື ການເສບດົນຕີ ຕ້ອງອາບັດປາຈິດຕີ

### ເລື່ອງພິກຂຸນີສັບພັກຄີ ຈົບ

## ສິກຂາບົດວິພັງ

[໗໓໕] ຄຳວ່າ ກໍ ຯລຯ ໃດ ຄືຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນວ່າເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ການຟ້ອນລຳ ໄດ້ແກ່ ການຟ້ອນລຳຢ່າງໃດຢ່າງໜຶ່ງ

ທີ່ຊື່ວ່າ ການຂັບຮ້ອງ ໄດ້ແກ່ ການຂັບຮ້ອງຢ່າງໃດຢ່າງໜຶ່ງ

ທີ່ຊື່ວ່າ ການເສບດົນຕີ ໄດ້ແກ່ ການເສບດົນຕີຢ່າງໃດຢ່າງໜຶ່ງ

## ບົດພາຊະນີ

[໗໓໖] ພິກຂຸນີຍ່າງໄປເພື່ອທີ່ຈະເບິ່ງ ຕ້ອງອາບັດທຸກກົດ ຢືນຢູ່ໃນທີ່ທີ່ພໍຈະແນມເຫັນ ຫຼື ໄດ້ຍິນ ຕ້ອງອາບັດປາຈິດຕີ ພົ້ນສາຍຕາໄປແລ້ວກັບຫຼຽວເບິ່ງ ຫຼື ຟັງອີກ ຕ້ອງອາບັດປາຈິດຕີ

ພິກຂຸນີຍ່າງໄປເພື່ອຈະເບິ່ງມະໂຫລະສົບແຕ່ລະຢ່າງ ຕ້ອງອາບັດທຸກກົດ ຢືນເບິ່ງຢູ່ໃນທີ່ທີ່ພໍຈະແນມເຫັນ ຫຼື ໄດ້ຍິນ ຕ້ອງອາບັດປາຈິດຕີ ພົ້ນສາຍຕາໄປແລ້ວກັບຫຼຽວເບິ່ງ ຫຼື ຟັງອີກ ຕ້ອງອາບັດປາຈິດຕີ

**ອະນາປັດຕິວານ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໕໗] ໑. ພິກຂຸນີຢືນໃນອາຮາມ ເຫັນ ຫຼື ໄດ້ຍິນ[໑]

໒. ພິກຂຸນີຢືນ ນັ່ງ ຫຼື ນອນຢູ່ ເຂົາຟ້ອນລຳ ຂັບຮ້ອງ ຫຼື ເສບຜ່ານມາຍັງທີ່ນັ້ນ ໆ

໓. ພິກຂຸນີຍ່າງສວນທາງໄປເຫັນ ຫຼື ໄດ້ຍິນ

໔. ພິກຂຸນີມີວຽກງານຈຳເປັນຍ່າງຜ່ານໄປເຫັນ ຫຼື ໄດ້ຍິນ

໕. ພິກຂຸນີຜູ້ມີເຫດຂັດຂ້ອງ

໖. ພິກຂຸນີວິກົນຈະລິດ

໗. ພິກຂຸນີຕົ້ນບັນຍັດ

**ສິກຂາບົດທີ ໑໐ ຈົບ**

**ລະສຸນະວັກທີ ໑ ຈົບ**

# ໒. ອັນທະກາຣະວັກ

## ໝວດວ່າດ້ວຍຄວາມມືດ

## ສິກຂາບົດທີ ໑

### ວ່າດ້ວຍການສົນທະນາກັບຊາຍໃນທີ່ມືດ

### ເລື້ອງພິກຂຸນີອັນເຕວາສີນີຂອງພຣະພັດທະກາປິລານີ

[໗໕໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ຊາຍຜູ້ເປັນຍາດຂອງພິກຂຸນີຜູ້ເປັນອັນເຕວາສີນີຂອງພຣະພັດທະກາປິລານີ ເດີນທາງຈາກໝູ່ບ້ານໄປນະຄອນສາວັດຖີດ້ວຍວຽກ

ງານບາງຢ່າງ ຄັ້ງນັ້ນ ພິກຂຸນີນັ້ນຢືນຢຽງຄູ່ກັນແດ່ ສົນທະນາກັນແດ່ສອງຕໍ່ສອງກັບຊາຍນັ້ນໃນເວລາຄ່ຳຄືນ ບໍ່ມີປະທີບ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງຢືນຢຽງຄູ່ກັນແດ່ ສົນທະນາກັນແດ່ສອງຕໍ່ສອງກັບຊາຍໃນເວລາຄ່ຳຄືນ ບໍ່ມີປະທີບນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຢືນຢຽງຄູ່ກັນແດ່ ສົນທະນາກັນແດ່ສອງຕໍ່ສອງກັບຊາຍໃນເວລາຄ່ຳຄືນ ບໍ່ມີປະທີບ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງຢືນຢຽງຄູ່ກັນແດ່ ສົນທະນາກັນແດ່ສອງຕໍ່ສອງກັບຊາຍ ໃນເວລາຄ່ຳຄືນບໍ່ມີປະທີບນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນ ທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໓໙] ກໍພິກຂຸນີໃດ ຢືນຢຽງຄູ່ກັນ ຫຼື ສົນທະນາກັນສອງຕໍ່ສອງກັບຊາຍໃນເວລາຄ່ຳຄືນບໍ່ມີປະທີບ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີອັນເຕວາສີນີຂອງພຣະພັດທະກາປິລານີ ຈົບ

## ສິກຂາບົດວິພັງ

[໗໔໐] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ໃນເວລາຄ່ຳຄືນ ໄດ້ແກ່ ເມື່ອດວງອາທິດຕົກແລ້ວ

ຄຳວ່າ ບໍ່ມີປະທີບ ຄື ບໍ່ມີແສງສະຫວ່າງ

ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸດຜູ້ຊາຍ ບໍ່ແມ່ນຍັກ ບໍ່ແມ່ນເຜດ ບໍ່ແມ່ນສັດເດຍຣັດສານຕົວຜູ້ ແຕ່ເປັນມະນຸດຜູ້ຊາຍທີ່ຮູ້ດຽງສາ ສາມາດຢືນຄຽງຄູ່ກັນ ສົນທະນາກັນໄດ້

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ສອງຕໍ່ສອງ ຄື ຊາຍ ແລະ ພິກຂຸນີ

ຄຳວ່າ ຢືນຄຽງຄູ່ກັນ ຄື ຢືນຢູ່ໃນໄລຍະແຂນຊາຍ ຕ້ອງອາບັດປາຈິດຕີ

ຄຳວ່າ ຫຼື ສົນທະນາກັນ ຄື ຢືນເຈລະຈາຢູ່ໃນໄລຍະແຂນຊາຍ ຕ້ອງອາບັດປາຈິດຕີ

ຢືນຄຽງຄູ່ກັນ ຫຼື ສົນທະນາກັນພົ້ນໄລຍະແຂນ ຕ້ອງອາບັດທຸກກົດ

ຢືນຄຽງຄູ່ກັນ ຫຼື ສົນທະນາກັນກັບຍັກ ເຜດ ບັນເດາະ ຫຼື ສັດເດຍຣັດສານຕົວຜູ້ທີ່ມີຮ່າງຄ້າຍມະນຸດ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໔໑] ໑. ພິກຂຸນີ ມີສະຕິຄົນໃດຄົນໜຶ່ງທີ່ຮູ້ດຽງສາຢູ່ເປັນເພື່ອນ

໒. ພິກຂຸນີ ຜູ້ບໍ່ປະສົງຈະຢູ່ໃນທີ່ລັບ ຢືນຄຽງຄູ່ກັນ ຫຼື ສົນທະນາກັນ

໓. ພິກຂຸນີ ທີ່ຢືນຄຽງຄູ່ກັນ ຫຼື ສົນທະນາກັນແຕ່ຄິດໃນເລື້ອງອື່ນ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑ ຈົບ**

# ໔. ອັນທະກາຣະວັກ

## ສິກຂາບົດທີ ໔

## ວ່າດ້ວຍການຢືນກັບຊາຍໃນທີ່ກຳບັງ

## ເລື້ອງພິກຂຸນີອັນເຕວາສີນີຂອງພຣະພັດທະກາປີລານີ

[໗໔໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ຊາຍຜູ້ເປັນຍາດຂອງພິກຂຸນີຜູ້ເປັນອັນເຕວາສີນີຂອງພຣະພັດທະກາປີລານີເດີນທາງຈາກໝູ່ບ້ານໄປນະຄອນສາວັດຖີດ້ວຍວຽກງານບາງຢ່າງ ລຳດັບນັ້ນ ພິກຂຸນີນັ້ນຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມຢືນຄຽງຄູ່ກັນ ສົນທະ

ນາກັນສອງຕໍ່ສອງກັບຊາຍໃນເວລາຄ່ຳມືດ ບໍ່ມີປະທີບ" ຈຶ່ງຢືນຄຽງຄູ່ກັນແດ່ ສົນທະນາກັນແດ່ ໃນໂອກາດທີ່ກຳບັງ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງຢືນຄຽງຄູ່ກັນແດ່ ສົນທະນາກັນແດ່ສອງຕໍ່ສອງກັບຊາຍໃນໂອກາດທີ່ກຳບັງນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຢືນຄຽງຄູ່ກັນແດ່ ສົນທະນາກັນແດ່ສອງຕໍ່ສອງກັບຊາຍໃນໂອກາດທີ່ກຳບັງ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງຢືນຄຽງຄູ່ກັນແດ່ ສົນທະນາກັນແດ່ສອງຕໍ່ສອງກັບຊາຍໃນໂອກາດທີ່ກຳບັງນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງ ໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໘໔໓] ກໍພິກຂຸນີໃດ ຢືນຄຽງຄູ່ກັນ ຫຼື ສົນທະນາກັນສອງຕໍ່ສອງກັບຊາຍໃນໂອກາດທີ່ກຳບັງ ຕ້ອງອາບັດປາຈິດຕີ

### ເລື່ອງພິກຂຸນີອັນເຕວາສີນີຂອງພຣະພັດທະກາປີລານີ ຈົບ

## ສິກຂາບົດວິພັງ

[໘໔໔] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນວ່າເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ໂອກາດຊື່ວ່າ ທີ່ກຳບັງ ໄດ້ແກ່ ທີ່ກຳບັງດ້ວຍຝາ ບານປະຕູ ສາດລຳແພນ ມ່ານ ຕົ້ນໄມ້ ເສົາ ຫຼື ກະລອມ ຢ່າງໃດຢ່າງໜຶ່ງ

ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸດຜູ້ຊາຍ ບໍ່ແມ່ນຍັກ ບໍ່ແມ່ນເຜດ ບໍ່ແມ່ນສັດເດຍຣັດສານ

ຕົວຜູ້ ແຕ່ເປັນມະນຸດຜູ້ຊາຍທີ່ຮູ້ດຽງສາ ສາມາດຈະຢືນຄຽງຄູ່ສົນທະນາກັນໄດ້

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ສອງຕໍ່ສອງ ຄື ຊາຍ ແລະພິກຂຸນີ

ຄຳວ່າ ຢືນຄຽງຄູ່ກັນ ຄື ຢືນຢູ່ໃນໄລຍະແຂນຊາຍ ຕ້ອງອາບັດປາຈິດຕີ

ຄຳວ່າ ຫຼື ສົນທະນາກັນ ຄື ສົນທະນາຢູ່ໃນໄລຍະແຂນຜູ້ຊາຍ ຕ້ອງອາບັດປາຈິດຕີ

ຢືນຄຽງຄູ່ກັນ ຫຼື ສົນທະນາກັນພົ້ນໄລຍະແຂນ ຕ້ອງອາບັດທຸກກົດ

ຢືນຄຽງຄູ່ກັນ ຫຼື ສົນທະນາກັນກັບຍັກ ເຜດ ບັນເດາະ ຫຼື ສັດເດຍຣັດສານຕົວຜູ້ທີ່ມີຮ່າງຄ້າຍມະນຸດ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໔໕] ໑. ພິກຂຸນີ ມີສະຕິຄົນໃດຄົນໜຶ່ງທີ່ຮູ້ດຽງສາຢູ່ເປັນເພື່ອນ

໒. ພິກຂຸນີ ຜູ້ບໍ່ປະສົງທີ່ຈະຢູ່ໃນທີ່ລັບ ຢືນຄຽງຄູ່ກັນ ຫຼື ສົນທະນາກັນ

໓. ພິກຂຸນີ ທີ່ຢືນຄຽງຄູ່ກັນ ຫຼື ສົນທະນາກັນແຕ່ຄິດໃນເລື້ອງອື່ນ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໒ ຈົບ**

# ໒. ອັນທະກາຣະວັກ

## ສິກຂາບົດທີ ໓

## ວ່າດ້ວຍການສົນທະນາກັບຊາຍໃນທີ່ແຈ້ງ

## ເລື້ອງພິກຂຸນີອັນເຕວາສີນີຂອງພຣະພັດທະກາປິລານີ

[໗໔໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ຊາຍຜູ້ເປັນຍາດຂອງພິກຂຸນີຜູ້ເປັນອັນເຕວາສີນີຂອງພຣະພັດທະກາປິລານີ ເດີນທາງຈາກໝູ່ບ້ານໄປນະຄອນສາວັດຖີດ້ວຍວຽກງານບາງຢ່າງ ລຳດັບນັ້ນ ພິກຂຸນີນັ້ນຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມຢືນຄຽງຄູ່ກັນສົນທະນາກັນ

ສອງຕໍ່ສອງກັບຊາຍໃນໂອກາດທີ່ກຳບັງ" ຈຶ່ງຢືນຄຽງຄູ່ກັນແດ່ ສົນທະນາກັນແດ່ສອງຕໍ່ສອງກັບຊາຍໃນທີ່ແຈ້ງ

ພິກຂຸນີຜູ້ມັກໜ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງນາງພິກຂຸນີຈຶ່ງຢືນຄຽງຄູ່ກັນແດ່ ສົນທະນາກັນແດ່ສອງຕໍ່ສອງກັບຊາຍໃນທີ່ແຈ້ງນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຢືນຄຽງຄູ່ກັນແດ່ ສົນທະນາກັນແດ່ສອງຕໍ່ສອງກັບຊາຍໃນທີ່ແຈ້ງ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງຢືນຄຽງຄູ່ກັນແດ່ ສົນທະນາກັນແດ່ສອງຕໍ່ສອງກັບຊາຍໃນທີ່ແຈ້ງນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໙໔໗] ກໍ ພິກຂຸນີໃດ ຢືນຄຽງຄູ່ກັນ ຫຼື ສົນທະນາກັນສອງຕໍ່ສອງກັບຊາຍໃນທີ່ແຈ້ງ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີອັນເຕວາສິນີຂອງພຣະພັດທະກາປິລານີ ຈົບ

## ສິກຂາບົດວິພັງ

[໙໔໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ທີ່ແຈ້ງ ໄດ້ແກ່ ສະຖານທີ່ບໍ່ໄດ້ກຳບັງດ້ວຍຝາ ບານປະຕູ ສາດລຳແພນ ມ່ານຕົ້ນໄມ້ ເສົາ ຫຼື ກະລອມ ຢ່າງໃດຢ່າງໜຶ່ງ

ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸດຜູ້ຊາຍ ບໍ່ແມ່ນຍັກ ບໍ່ແມ່ນເຜດ ບໍ່ແມ່ນສັດເດຍຣັດສານຕົວຜູ້ ແຕ່ເປັນມະນຸດຜູ້ຊາຍທີ່ຮູ້ດຽງສາ ສາມາດຢືນຄຽງຄູ່ສົນທະນາກັນໄດ້

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ສອງຕໍ່ສອງ ຄື ຊາຍ ແລະພິກຂຸນີ

ຄຳວ່າ ຢືນຄຽງຄູ່ກັນ ຄື ຢືນຢູ່ໃນໄລຍະແຂນຊາຍ ຕ້ອງອາບັດປາຈິດຕີ

ຄຳວ່າ ຫຼື ສົນທະນາກັນ ຄື ສົນທະນາຢູ່ໃນໄລຍະແຂນຊາຍ ຕ້ອງອາບັດປາຈິດຕີ

ຢືນຄຽງຄູ່ກັນ ຫຼື ສົນທະນາກັນພົ້ນໄລຍະແຂນ ຕ້ອງອາບັດທຸກກົດ

ຢືນຄຽງຄູ່ກັນ ຫຼື ສົນທະນາກັນກັບຍັກ ເຜດ ບັນເດາະ ຫຼື ສັດເດຍຣັດສານຕົວຜູ້ທີ່ມີຮ່າງຄ້າຍມະນຸດ ຕ້ອງອາບັດທຸກກົດ

**ອະນາປັດຕິວານ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໔໙] ໑. ພິກຂຸນີ ມີສະຕິຄົນໃດຄົນໜຶ່ງທີ່ຮູ້ດຽງສາຢູ່ເປັນເພື່ອນ

໒. ພິກຂຸນີຜູ້ບໍ່ປະສົງທີ່ຈະຢູ່ໃນທີ່ລັບ ຢືນຄຽງຄູ່ກັນ ຫຼື ສົນທະນາກັນ

໓. ພິກຂຸນີທີ່ຢືນຄຽງຄູ່ກັນ ຫຼື ສົນທະນາກັນແຕ່ຄິດໃນເລື້ອງອື່ນ

໔. ພິກຂຸນີວິກົນຈະລິດ

໕. ພິກຂຸນີຕົ້ນບັນຍັດ

**ສິກຂາບົດທີ ໓ ຈົບ**

# ໔. ອັນທະກາຣະວັກ

## ສິກຂາບົດທີ ໔

## ວ່າດ້ວຍການສົ່ງເພື່ອນພິກຂຸນີກັບ

## ເລື້ອງພິກຂຸນີຖຸນລະນັນທາ

[໗໕໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາຢືນຄຽງຄູ່ກັນແດ່ ສົນທະນາກັນແດ່ ເວົ້າຊິ່ມຂ້າງຫູແດ່ສອງຕໍ່ສອງກັບຊາຍໃນຖະໜົນແດ່ ຮອມຕັນແດ່ ທາງສາມແຍກແດ່ ສົ່ງພິກຂຸນີຜູ້ເປັນເພື່ອນກັບໄປກ່ອນແດ່

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຖຸນລະນັນທາຢືນຄຽງຄູ່ກັນແດ່ ສົນທະນາກັນແດ່ ເວົ້າຊິ່ມຂ້າງຫູແດ່ສອງຕໍ່ສອງກັບຊາຍໃນຖະໜົນແດ່ ຮ່ອມຕັນແດ່ ທາງສາມແຍກແດ່ ສົ່ງພິກຂຸນີຜູ້ເປັນເພື່ອນກັບໄປກ່ອນແດ່ບໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາຢືນຄຽງຄູ່ກັນ ແດ່ສົນທະນາກັນແດ່ ເວົ້າຊິ່ມຂ້າງຫູແດ່ສອງຕໍ່ສອງກັບຊາຍໃນຖະໜົນແດ່ ຮ່ອມຕັນແດ່ ທາງສາມແຍກແດ່ ສົ່ງພິກຂຸນີຜູ້ເປັນເພື່ອນກັບໄປກ່ອນແດ່ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາຢືນຄຽງຄູ່ກັນແດ່ ສົນທະນາກັນແດ່ ເວົ້າຊິ່ມຂ້າງຫູແດ່ສອງຕໍ່ສອງກັບຊາຍໃນຖະໜົນແດ່ ຮ່ອມຕັນແດ່ ທາງສາມແຍກແດ່

ສົ່ງພິກຂຸນີ ຜູ້ເປັນເພື່ອນກັບໄປກ່ອນແດ່ບໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໕໑] ກໍ ພິກຂຸນີໃດ ຢືນຄຽງຄູ່ກັນ ຫຼື ສົນທະນາກັນ ຫຼື ເວົ້າຊິ່ມຂ້າງຫູສອງຕໍ່ສອງກັບຊາຍໃນຖະໜົນ ຫຼື ຮ່ອມຕັນ ຫຼື ທາງສາມແຍກ ຫຼື ສົ່ງພິກຂຸນີຜູ້ເປັນເພື່ອນກັບໄປ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໗໕໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຖະໜົນ ໄດ້ແກ່ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງທາງເດີນ

ທີ່ຊື່ວ່າ ຮ່ອມຕັນ ໄດ້ແກ່ ຄົນເຂົ້າໄປທາງໃດຕ້ອງຍ່າງອອກທາງນັ້ນ

ທີ່ຊື່ວ່າ ທາງສາມແຍກ ໄດ້ແກ່ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງທາງແຍກ

ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸດຜູ້ຊາຍ ບໍ່ແມ່ນຍັກ ບໍ່ແມ່ນເຜດ ບໍ່ແມ່ນສັດເດຍຣັດສານ ຕົວຜູ້ ແຕ່ເປັນມະນຸດຜູ້ຊາຍທີ່ຮູ້ດຽງສາ ສາມາດຢືນຮ່ອມກັນ ສົນທະນາກັນໄດ້

ຄໍາວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄໍາວ່າ ສອງຕໍ່ສອງ ຄື ຊາຍ ແລະ ພິກຂຸນີ

ຄໍາວ່າ ຢືນຄຽງຄູ່ກັນ ຄື ຢືນຢູ່ໃນໄລຍະແຂນຊາຍ ຕ້ອງອາບັດປາຈິດຕີ

ຄໍາວ່າ ຫຼື ສົນທະນາກັນ ຄື ສົນທະນາກັນຢູ່ໃນໄລຍະແຂນຊາຍ ຕ້ອງອາບັດປາຈິດຕີ

ຄໍາວ່າ ຫຼື ເວົ້າຊິ່ມຂ້າງຫູ ຄື ບອກເນື້ອຄວາມໃກ້ຫູຊາຍ ຕ້ອງອາບັດປາຈິດຕີ

ຄໍາວ່າ ຫຼື ສົ່ງພິກຂຸນີຜູ້ເປັນເພື່ອນກັບໄປ ຄື ປະສົງຈະປະພຶດບໍ່ສົມຄວນ ຈຶ່ງສົ່ງພິກຂຸນີຜູ້ເປັນເພື່ອນກັບໄປ ຕ້ອງອາບັດປາຈິດຕີ ເມື່ອພິກຂຸນີຜູ້ເປັນເພື່ອນພົ້ນໄລຍະທີ່ຈະແນມເຫັນ ຫຼື ໄລຍະທີ່ຈະໄດ້ຍິນ ຕ້ອງອາບັດທຸກກົດ ເມື່ອພິກຂຸນີຜູ້ເປັນເພື່ອນ ພົ້ນໄປແລ້ວ ຕ້ອງອາບັດປາຈິດຕີ

ຢືນຄຽງຄູ່ກັນ ຫຼືສົນທາກັນກັບຊາຍພົ້ນໄລຍະແຂນ ຕ້ອງອາບັດທຸກກົດ

ຢືນຄຽງຄູ່ກັນ ຫຼື ສົນທະນາກັນກັບຍັກ ເຜດ ບັນເດາະ ຫຼື ສັດເດຍຣັດສານຕົວຜູ້ທີ່ມີຮ່າງຄ້າຍມະນຸດ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໕໑] ໑. ພິກຂຸນີ ມີສະຕິຄົນໃດຄົນໜຶ່ງທີ່ຮູ້ດຽງສາຢູ່ເປັນເພື່ອນ

໒. ພິກຂຸນີ ຜູ້ບໍ່ປະສົງທີ່ຈະຢູ່ໃນທີ່ລັບຢືນຄຽງຄູ່ກັນ ຫຼື ສົນທະນາກັນ

໓. ພິກຂຸນີ ທີ່ຢືນຄຽງຄູ່ກັນຫຼືສົນທະນາກັນແຕ່ຄິດໃນເລື້ອງອື່ນ

໔. ພິກຂຸນີ ສົ່ງເພື່ອນພິກຂຸນີກັບເມື່ອມີເຫດຈຳເປັນ

໕. ພິກຂຸນີ ວິກົນຈະລິດ

໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

# ໘. ອັນທະກາຣະວັກ

## ສິກຂາບົດທີ ໕

## ວ່າດ້ວຍການຈາກໄປໂດຍບໍ່ບອກເຈົ້າຂອງ

### ເລື້ອງພິກຂຸນີອົງໜຶ່ງ

[໗໕໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີອົງໜຶ່ງເປັນພິກຂຸນີປະຈຳຕະກູນໜຶ່ງ ຮັບພັດຕາຫານປະຈຳ ເມື່ອເວລາເຊົ້າ ພິກຂຸນີນັ້ນຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປເຖິງທີ່ຕະກູນນັ້ນ ເມື່ອເຖິງແລ້ວ ນັ່ງເທິງອາສະນະແລ້ວຈາກໄປໂດຍບໍ່ ບອກເຈົ້າຂອງເຮືອນ ຍິງຮັບໃຊ້ຕະກູນນັ້ນປັດກວດເຮືອນໄດ້ເກັບອາສະນະນັ້ນໄວ້ລະຫວ່າງພາຊະນະ ຄົນໃນເຮືອນບໍ່ເຫັນອາສະນະ ໄດ້ໄປຖາມພິກຂຸນີນັ້ນດັ່ງນີ້ວ່າ "ແມ່ເຈົ້າ ອາສະນະຢູ່ທີ່ໃດ"

ພິກຂຸນີນັ້ນກ່າວວ່າ "ທ່ານທັງຫຼາຍ ເຮົາກໍບໍ່ເຫັນອາສະນະນັ້ນ"

ຄົນເຫຼົ່ານັ້ນເວົ້າວ່າ "ແມ່ເຈົ້າ ໂຜດໃຫ້ອາສະນະນັ້ນເທີ້ນ" ບໍຣິພາດແລ້ວເຊົາຖວາຍ ພັດຕາຫານປະຈຳ ຕໍ່ມາຄົນເຫຼົ່ານັ້ນທຳຄວາມສະອາດເຮືອນຫຼັງນັ້ນ ພົບອາສະນະເຊື່ອງຢູ່ລະຫວ່າງພາຊະນະ ຈຶ່ງຂໍຂະມາພິກຂຸນີນັ້ນແລ້ວໄດ້ເລີ່ມ (ຖວາຍ) ພັດຕາຫານປະຈຳ

ຄັ້ງນັ້ນ ພິກຂຸນີນັ້ນບອກເລື້ອງນັ້ນ ໃຫ້ພິກຂຸນີທັງຫຼາຍຮູ້ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງເຂົ້າໄປສູ່ຕະກູນໃນເວລາກ່ອນສັນພັດຕາຫານ ນັ່ງເທິງອາສະນະແລ້ວຈາກໄປໂດຍບໍ່ບອກເຈົ້າຂອງເຮືອນບໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີເຂົ້າສູ່ຕະກູນໃນເວລາກ່ອນສັນພັດຕາຫານ ນັ່ງເທິງອາສະນະແລ້ວຈາກໄປໂດຍບໍ່ບອກເຈົ້າຂອງເຮືອນ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍເປັນຫຍັງ ພິກຂຸນີເຂົ້າສູ່ຕະກູນໃນເວລາກ່ອນສັນພັດຕາຫານ ນັ່ງເທິງອາສະນະແລ້ວຈາກໄປ

ໂດຍບໍ່ບອກເຈົ້າຂອງເຮືອນບໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໕໕] ກໍພິກຂຸນີໃດ ເຂົ້າໄປສູ່ຕະກູນໃນເວລາກ່ອນສັນພັດຕາຫານ ນັ່ງເທິງອາສະນະແລ້ວຈາກໄປໂດຍບໍ່ບອກເຈົ້າຂອງເຮືອນ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີອົງໜຶ່ງ ຈົບ

## ສິກຂາບົດວິພັງ

[໗໕໖] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ເວລາກ່ອນສັນພັດຕາຫານ ຄື ຕັ້ງແຕ່ເວລາອະຣຸນຂຶ້ນຈົນເຖິງທ່ຽງວັນ

ທີ່ຊື່ວ່າ ຕະກູນ ໝາຍເຖິງຕະກູນ ໔ ໄດ້ແກ່ ຕະກູນກະສັດ ຕະກູນພາມ ຕະກູນແພດ ຕະກູນສູດ

ຄຳວ່າ ເຂົ້າໄປ ຄື ໄປໃນຕະກູນນັ້ນ

ທີ່ຊື່ວ່າ ອາສະນະ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງທີ່ສຳລັບນັ່ງຂັດສະມາທິ

ຄຳວ່າ ນັ່ງ ຄື ນັ່ງເທິງອາສະນະນັ້ນ

ຄຳວ່າ ຈາກໄປໂດຍບໍ່ໄດ້ບອກເຈົ້າຂອງເຮືອນ ຄວາມວ່າ ບໍ່ບອກຄົນໃດຄົນໜຶ່ງໃນຕະກູນນັ້ນຜູ້ຮູ້ດຽງສາ ກ້າວພົ້ນຊາຍຄາ ຕ້ອງອາບັດປາຈິດຕີ ຍ່າງລ່ວງເຂດເຮືອນໃນທີ່ແຈ້ງ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໗໕໗] ຍັງບໍ່ໄດ້ບອກ ພິກຂຸນີສຳຄັນວ່າຍັງບໍ່ໄດ້ບອກ ຈາກໄປ ຕ້ອງອາບັດປາຈິດຕີ

ຍັງບໍ່ໄດ້ບອກ ພິກຂຸນີບໍ່ແນ່ໃຈ ຈາກໄປ ຕ້ອງອາບັດປາຈິດຕີ

ຍັງບໍ່ໄດ້ບອກ ພິກຂຸນີສຳຄັນວ່າບອກແລ້ວ ຈາກໄປ ຕ້ອງອາບັດປາຈິດຕີ

### ຕິກະທຸກກົດ

ທີ່ບໍ່ແມ່ນທີ່ສຳລັບນັ່ງຂັດສະມາທິ ຕ້ອງອາບັດທຸກກົດ
ບອກແລ້ວ ພິກຂຸນີສຳຄັນວ່າຍັງບໍ່ໄດ້ບອກ ຕ້ອງອາບັດທຸກກົດ
ບອກແລ້ວ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ບອກແລ້ວ ພິກຂຸນີສຳຄັນວ່າບອກແລ້ວ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໕໗] ໑. ພິກຂຸນີ ໄປໂດຍບອກແລ້ວ
໒. ພິກຂຸນີ ຜູ້ນັ່ງເທິງອາສະນະທີ່ເຄື່ອນຍ້າຍບໍ່ໄດ້
໓. ພິກຂຸນີ ຜູ້ເປັນໄຂ້
໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໕. ພິກຂຸນີ ວິກົນຈະລິດ
໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໕ ຈົບ**

# ໔. ອັນທະກາຣະວັກ

## ສິກຂາບົດທີ ໖

## ວ່າດ້ວຍການນັ່ງນອນເທິງອາສະນະໂດຍບໍ່ບອກເຈົ້າຂອງ ເລື້ອງພິກຂຸນີຖຸນລະນັນທາ

[໗໕໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາເຂົ້າໄປສູ່ຕະກູນ ທັງຫຼາຍພາຍຫຼັງສັນພັດຕາຫານ ນັ່ງແດ່ ນອນແດ່ເທິງອາສະນະໂດຍບໍ່ບອກເຈົ້າຂອງເຮືອນ ຄົນໃນເຮືອນເກງໃຈພິກຂຸນີຖຸນລະນັນທາ ຈຶ່ງບໍ່ກ້ານັ່ງ ຫຼື ນອນເທິງອາສະນະ ຄົນທັງຫຼາຍພາ ກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຖຸນລະນັນທາຈຶ່ງເຂົ້າໄປສູ່ຕະກູນພາຍຫຼັງ ສັນພັດຕາຫານ ນັ່ງແດ່ ນອນແດ່ເທິງອາສະນະໂດຍບໍ່ບອກເຈົ້າຂອງເຮືອນນໍ"

ພິກຂຸນີທັງຫຼາຍ ໄດ້ຍິນຄົນພວກນັ້ນຕໍາໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຖຸນລະນັນທາຈຶ່ງ ເຂົ້າໄປສູ່ຕະກູນພາຍຫຼັງສັນພັດຕາຫານ ນັ່ງແດ່ ນອນແດ່ເທິງອາສະນະໂດຍບໍ່ບອກເຈົ້າຂອງເຮືອນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນໍາເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາເຂົ້າໄປສູ່ຕະກູນພາຍຫຼັງສັນພັດຕາຫານ ນັ່ງແດ່ ນອນແດ່ເທິງອາສະນະໂດຍບໍ່ບອກເຈົ້າຂອງເຮືອນ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາຈຶ່ງເຂົ້າໄປສູ່ຕະກູນພາຍຫຼັງສັນ ພັດຕາຫານ ນັ່ງແດ່ ນອນແດ່ເທິງອາສະນະໂດຍບໍ່ບອກເຈົ້າຂອງເຮືອນນໍ ພິກຂຸທັງຫຼາຍ ການກະທໍາແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນ ສະແດງດັ່ງນີ້

## ພຣະບັນຍັດ

[໗໒໐] ກໍພິກຂຸນີໃດ ເຂົ້າໄປສູ່ຕະກູນພາຍຫຼັງສັນພັດຕາຫານ ນັ່ງ ຫຼື ນອນເທິງ ອາສະນະໂດຍບໍ່ບອກເຈົ້າຂອງເຮືອນ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໗໒໑] ຄໍາວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄໍາວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ພາຍຫຼັງສັນພັດຕາຫານ ໄດ້ແກ່ ຕັ້ງແຕ່ເວລາທ່ຽງວັນໄປຈົນເຖິງດວງອາທິດຕົກ

ທີ່ຊື່ວ່າ ຕະກູນ ໝາຍເຖິງຕະກູນ ໔ ໄດ້ແກ່ ຕະກູນກະສັດ ຕະກູນພາມ ຕະກູນແພດ ຕະກູນສູດ

ຄໍາວ່າ ເຂົ້າໄປ ຄື ໄປໃນຕະກູນນັ້ນ

ຄຳວ່າ ໂດຍບໍ່ບອກເຈົ້າຂອງເຮືອນ ຄື ບໍ່ຂໍອະນຸຍາດເຈົ້າຂອງເຮືອນຜູ້ຮັບຜິດຊອບໃນຕະກູນນັ້ນ

ທີ່ຊື່ວ່າ ອາສະນະ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງທີ່ສຳລັບນັ່ງຂັດສະມາທິ

ຄຳວ່າ ນັ່ງ ຄື ນັ່ງເທິງອາສະນະນັ້ນ ຕ້ອງອາບັດປາຈິດຕີ

ຄຳວ່າ ຫຼື ນອນ ຄື ນອນເທິງອາສະນະນັ້ນ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໗໖໔] ຍັງບໍ່ໄດ້ບອກ ພິກຂຸນີສຳຄັນວ່າຍັງບໍ່ໄດ້ບອກ ນັ່ງ ຫຼື ນອນເທິງອາສະນະ ຕ້ອງອາບັດປາຈິດຕີ

ຍັງບໍ່ໄດ້ບອກ ພິກຂຸນີບໍ່ແນ່ໃຈ ນັ່ງ ຫຼື ນອນເທິງອາສະນະ ຕ້ອງອາບັດປາຈິດຕີ

ຍັງບໍ່ໄດ້ບອກ ພິກຂຸນີສຳຄັນວ່າບອກແລ້ວ ນັ່ງ ຫຼື ນອນເທິງອາສະນະ ຕ້ອງອາບັດປາຈິດຕີ

## ຕິກະທຸກກົດ

ບໍ່ແມ່ນທີ່ສຳລັບນັ່ງຂັດສະມາທິ ຕ້ອງອາບັດທຸກກົດ

ບອກແລ້ວ ພິກຂຸນີສຳຄັນວ່າຍັງບໍ່ໄດ້ບອກ ຕ້ອງອາບັດທຸກກົດ

ບອກແລ້ວ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ບອກແລ້ວ ພິກຂຸນີສຳຄັນວ່າບອກແລ້ວ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໖໓] ໑. ພິກຂຸນີ ບອກແລ້ວນັ່ງ ຫຼື ນອນເທິງອາສະນະ

໒. ພິກຂຸນີ ນັ່ງ ຫຼື ນອນເທິງອາສະນະທີ່ເຂົາປູໄວ້ປະຈຳ

໓. ພິກຂຸນີ ຜູ້ເປັນໄຂ້

໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໕. ພິກຂຸນີ ວິກົນຈະລິດ

໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໖ ຈົບ**

# ໘. ອັນທະກາຣະວັກ

## ສິກຂາບົດທີ ໗

## ວ່າດ້ວຍການປູລາດໂດຍບໍ່ບອກ

### ເລື້ອງພິກຂຸນີຫຼາຍອົງ

[໗໖໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຫຼາຍອົງເດີນທາງໄປນະຄອນສາວັດຖີ ແຄວັ້ນໂກສົນ ເຖິງໝູ່ບ້ານແຫ່ງໜຶ່ງໃນເວລາແລງ ເຂົ້າໄປສູ່ຕະກູນພາມຕະກູນໜຶ່ງຂໍໂອກາດ ລຳດັບນັ້ນ ພຣາມມະນີໄດ້ກ່າວກັບພິກຂຸນີເຫຼົ່ານັ້ນ ດັ່ງນີ້ວ່າ "ແມ່ເຈົ້າທັງ ຫຼາຍໂຜດຖ້າຈົນກວ່າພາມຈະມາ"

ພວກພິກຂຸນີກ່າວວ່າ "ພວກເຮົາຈະຖ້າຈົນກວ່າພາມຈະມາ" ໄດ້ປູທີ່ນອນ ບາງພວກນັ່ງບາງພວກນອນ ເມື່ອໃນຕອນກາງຄືນ ພາມກັບມາພົບເຫັນໄດ້ກ່າວກັບພາມມະນີດັ່ງນີ້ວ່າ "ສະຕີເຫຼົ່ານີ້ເປັນໃຜ"

ພາມມະນີກ່າວວ່າ "ພໍ່ເຈົ້າ ສະຕີເຫຼົ່ານີ້ເປັນພິກຂຸນີ"
ພາມກ່າວວ່າ "ພວກທ່ານຈົ່ງຂັບໄລ່ຍິງຊົ່ວຫົວໂລ້ນພວກນີ້ອອກໄປ" ແລ້ວໃຫ້ຂັບໄລ່ອອກຈາກເຮືອນ

ເມື່ອພິກຂຸນີເຫຼົ່ານັ້ນ ໄປເຖິງນະຄອນສາວັດຖີ ເລົ່າເລື່ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້ ບັນດາພິກຂຸນີຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງເຂົ້າໄປສູ່ຕະກູນໃນເວລາວິການ ປູ ຫຼື ໃຊ້ໃຫ້ປູທີ່ນອນໂດຍບໍ່ບອກເຈົ້າຂອງເຮືອນແລ້ວນັ່ງແດ່ນອນແດ່ນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີເຂົ້າໄປສູ່ຕະກູນໃນເວລາວິການ ປູ ຫຼື ໃຊ້ໃຫ້ປູທີ່ນອນໂດຍບໍ່ບອກເຈົ້າຂອງເຮືອນແລ້ວນັ່ງແດ່ ນອນແດ່ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໆລໆ ພິກຂຸ

ທັງຫຼາຍ ເປັນຫຍັງ ພວກພິກຂຸນີຈຶ່ງເຂົ້າໄປສູ່ຕະກູນໃນເວລາວິການ ປູ ຫຼື ໃຊ້ໃຫ້ປູ ທີ່ນອນ ໂດຍບໍ່ບອກເຈົ້າຂອງເຮືອນແລ້ວນັ່ງແດ່ ນອນແດ່ນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໕໕] ກໍພິກຂຸນີໃດ ເຂົ້າໄປສູ່ຕະກູນໃນເວລາວິການ ປູ ຫຼື ໃຊ້ໃຫ້ປູທີ່ນອນໂດຍບໍ່ບອກ ເຈົ້າຂອງເຮືອນແລ້ວນັ່ງ ຫຼື ນອນ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໗໕໖] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະ ພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ເວລາວິການ ຄື ຕັ້ງແຕ່ເວລາດວງອາທິດຕົກໄປຈົນເຖິງອະຣຸນຂຶ້ນ

ທີ່ຊື່ວ່າ ຕະກູນ ໝາຍເຖິງຕະກູນ ໔ ໄດ້ແກ່ ຕະກູນກະສັດ ຕະກູນພາມ ຕະກູນແພດ ຕະກູນສູດ

ຄຳວ່າ ເຂົ້າໄປ ຄື ໄປໃນຕະກູນນັ້ນ

ຄຳວ່າ ໂດຍບໍ່ບອກເຈົ້າຂອງເຮືອນ ຄື ບໍ່ຂໍອະນຸຍາດເຈົ້າຂອງເຮືອນຜູ້ຮັບຜິດຊອບໃນ ຕະກູນນັ້ນ

ທີ່ຊື່ວ່າ ທີ່ນອນ ໂດຍທີ່ສຸດແມ່ນເຄື່ອງປູລາດທີ່ເຮັດດ້ວຍໃບໄມ້

ຄຳວ່າ ປູ ຄື ປູເອງ

ຄຳວ່າ ໃຊ້ໃຫ້ປູ ຄື ໃຊ້ຜູ້ອື່ນໃຫ້ປູ

ຄຳວ່າ ນັ່ງ ຄື ນັ່ງເທິງທີ່ນອນນັ້ນ ຕ້ອງອາບັດປາຈິດຕີ

ຄຳວ່າ ຫຼື ນອນ ຄື ນອນເທິງທີ່ນອນນັ້ນ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

[໗໕໗] ຍັງບໍ່ໄດ້ບອກ ພິກຂຸນີສຳຄັນວ່າຍັງບໍ່ໄດ້ບອກ ປູ ຫຼື ໃຊ້ຜູ້ອື່ນໃຫ້ປູທີ່ນອນແລ້ວ ນັ່ງຫຼືນອນ ຕ້ອງອາບັດປາຈິດຕີ

ຍັງບໍ່ໄດ້ບອກ ພິກຂຸນີບໍ່ແນ່ໃຈ ປູ ຫຼື ໃຊ້ຜູ້ອື່ນໃຫ້ປູທີ່ນອນແລ້ວນັ່ງ ຫຼື ນອນ ຕ້ອງອາບັດປາຈິດຕີ

ຍັງບໍ່ໄດ້ບອກ ພິກຂຸນີສຳຄັນວ່າບອກແລ້ວ ປູ ຫຼື ໃຊ້ຜູ້ອື່ນໃຫ້ປູທີ່ນອນແລ້ວນັ່ງຫຼືນອນ ຕ້ອງອາບັດປາຈິດຕີ

### ທຸກະທຸກກົດ

ບອກແລ້ວ ພິກຂຸນີສຳຄັນວ່າຍັງບໍ່ໄດ້ບອກ ຕ້ອງອາບັດທຸກກົດ
ບອກແລ້ວ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ບອກແລ້ວ ພິກຂຸນີສຳຄັນວ່າບອກແລ້ວ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໖໗] ໑. ພິກຂຸນີ ບອກເຈົ້າຂອງ ປູເອງ ຫຼື ໃຊ້ຜູ້ອື່ນໃຫ້ປູທີ່ນອນ ນັ່ງ ຫຼື ນອນ
໒. ພິກຂຸນີ ຜູ້ເປັນໄຂ້
໓. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໔. ພິກຂຸນີ ວິກົນຈະລິດ
໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ໔. ອັນທະກາຣະວັກ

## ສິກຂາບົດທີ ໑

## ວ່າດ້ວຍການໃຫ້ຜູ້ອື່ນໂພນທະນາ

## ເລື້ອງພິກຂຸນີອັນເຕວາສີນີຂອງພຣະພັດທະກາປີລານີ

[໗໖໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີອັນເຕວາສີນີຂອງພຣະພັດທະກາປີລານີອຸປັດຖາກພຣະພັດທະກາປີລານີໂດຍເຄົາລົບ ພຣະພັດທະກາປີລານີໄດ້ກ່າວກັບພິກຂຸນີທັງຫຼາຍດັ່ງນີ້ວ່າ "ແມ່ເຈົ້າ ພິກຂຸນີນີ້ອຸປັດຖາກເຮົາໂດຍເຄົາລົບ ເຮົາຈະໃຫ້ຈີວອນທ່ານ" ແຕ່

ພິກຂຸນີນັ້ນຍ້ອນຄວາມເຂົ້າໃຈຜິດ ຍ້ອນພິຈາຣະນາຜິດ ໃຫ້ຜູ້ອື່ນໂພນທະນາວ່າ "ແມ່ເຈົ້າ ເຂົາວ່າເຮົາບໍ່ໄດ້ອຸປັດຖາກແມ່ເຈົ້າໂດຍເຄົາລົບ ແມ່ເຈົ້າຈະບໍ່ໃຫ້ຈີວອນແກ່ເຮົາ"

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງໃຫ້ຜູ້ອື່ນໂພນທະນາຍ້ອນເຂົ້າໃຈຜິດ ຍ້ອນພິຈາຣະນາຜິດນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີໃຫ້ຜູ້ອື່ນໂພນທະນາຍ້ອນເຂົ້າໃຈຜິດ ຍ້ອນພິຈາຣະນາຜິດ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງໃຫ້ຜູ້ອື່ນໂພນທະນາຍ້ອນເຂົ້າໃຈຜິດ ຍ້ອນພິຈາຣະນາຜິດນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດ ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໘໗໐] ກໍພິກຂຸນີໃດ ຍ້ອນເຂົ້າໃຈຜິດ ຍ້ອນພິຈາຣະນາຜິດ ໃຫ້ຜູ້ອື່ນໂພນທະນາ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີອັນເຕວາສີນີຂອງພຣະພັດທະກາປິລານີ ຈົບ

## ສິກຂາບົດວິພັງ

[໘໗໑] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ຍ້ອນເຂົ້າໃຈຜິດ ຄື ຍ້ອນເຂົ້າໃຈເປັນຢ່າງອື່ນ

ຄຳວ່າ ຍ້ອນພິຈາຣະນາຜິດ ຄື ຍ້ອນພິຈາຣະນາເປັນຢ່າງອື່ນ

ຄຳວ່າ ຜູ້ອື່ນ ໄດ້ແກ່ ໃຫ້ອຸປະສຳບັນໂພນທະນາ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕິ

[໘໗໔] ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ໃຫ້ໂພນທະນາ ຕ້ອງອາບັດປາຈິດຕິ

ອຸປະສຳບັນ ພິກຂຸນີບໍ່ແນ່ໃຈ ໃຫ້ໂພນທະນາ ຕ້ອງອາບັດປາຈິດຕິ

ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ໃຫ້ໂພນທະນາ ຕ້ອງອາບັດປາຈິດຕິ

### ທຸກກົດ

ພິກຂຸນີໃຫ້ອະນຸປະສຳບັນໂພນທະນາ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໘໗໕] ໑. ພິກຂຸນີ ວິກົນຈະລິດ

໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໘ ຈົບ**

# ໔. ອັນທະກາຣະວັກ

## ສິກຂາບົດທີ ໗

## ວ່າດ້ວຍການສາບແຊ່ງຕົນເອງແລະຜູ້ອື່ນ

### ເລື້ອງພິກຂຸນີຈັນທະກາລີ

[໘໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍບໍ່ເຫັນສິ່ງຂອງ

ຂອງຕົນໄດ້ກ່າວກັບພິກຂຸນີຈັນທະກາລີດັ່ງນີ້ວ່າ “ແມ່ເຈົ້າ ທ່ານເຫັນສິ່ງຂອງຂອງພວກເຮົາແດ່ບໍ?”

ພິກຂຸນີຈັນທະກາລີຕຳໜິ ປະນາມ ໂພນທະນາວ່າ “ເຮົານີ້ລະ ທີ່ເປັນຄົນລັກ ເຮົານີ້ລະບໍ່ມີຄວາມລະອາຍ ພວກແມ່ເຈົ້າທີ່ບໍ່ເຫັນສິ່ງຂອງຂອງຕົນຕ່າງພາກັນກ່າວກັບເຮົາແນວນີ້ວ່າເຫັນສິ່ງຂອງຂອງພວກເຮົາແດ່ບໍ່? ແມ່ເຈົ້າ ຖ້າເຮົາເອົາສິ່ງຂອງຂອງພວກທ່ານໄປ ເຮົາກໍຈິ່ງເປັນຜູ້ບໍ່ແມ່ນສະມະນະຍິງ ຈິ່ງເຄື່ອນຈາກພົມມະຈັນ ຈິ່ງບັງເກີດໃນນະຣົກ ສ່ວນຜູ້ທີ່ກ່າວຫາເຮົາດ້ວຍເລື້ອງທີ່ບໍ່ຈິງກໍຈິ່ງບໍ່ເປັນສະມະນະຍິງ ຈິ່ງເຄື່ອນຈາກພົມມະຈັນ ຈິ່ງບັງເກີດໃນນະຣົກ”

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ແມ່ເຈົ້າຈັນທະກາລີຈຶ່ງສາບແຊ່ງຕົນເອງແດ່ ຜູ້ອື່ນແດ່ ດ້ວຍນະຣົກແດ່ ດ້ວຍພົມມະຈັນແດ່ ນໍ” ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸ ໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຈັນທະກາລີສາບແຊ່ງຕົນເອງແດ່ ຜູ້ອື່ນແດ່ ດ້ວຍນະຣົກແດ່ ດ້ວຍພົມມະຈັນແດ່ ແມ່ນບໍ?” ພິກຂຸທັງຫຼາຍທູນຮັບວ່າ “ແມ່ນຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈັນທະກາລີຈຶ່ງສາບແຊ່ງຕົນເອງແດ່ ຜູ້ອື່ນແດ່ ດ້ວຍນະຣົກແດ່ ດ້ວຍພົມມະຈັນແດ່ນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ແລ້ວ ຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໙໗໕] ກໍພິກຂຸນີໃດ ສາບແຊ່ງຕົນເອງ ຫຼື ຜູ້ອື່ນດ້ວຍນະຣົກ ຫຼື ດ້ວຍພົມມະຈັນ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຈັນທະກາລີ ຈົບ

## ສິກຂາບົດວິພັງ

[໙໗໖] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ຕົນເອງ ຄື ສະເພາະຕົວເອງ

ຄຳວ່າ ຜູ້ອື່ນ ໄດ້ແກ່ ອຸປະສຳບັນ ພິກຂຸນີສາບແຊ່ງ (ອຸປະສຳບັນ) ດ້ວຍນະຮົກ ຫຼື ດ້ວຍພົມມະຈັນ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໘໗໗] ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ສາບແຊ່ງດ້ວຍນະຮົກ ຫຼື ດ້ວຍພົມມະຈັນ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸນີບໍ່ແນ່ໃຈ ສາບແຊ່ງດ້ວຍນະຮົກ ຫຼື ດ້ວຍພົມມະຈັນ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ສາບແຊ່ງດ້ວຍນະຮົກ ຫຼື ດ້ວຍພົມມະຈັນ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸນີສາບແຊ່ງດ້ວຍ (ຄຳທີ່ບົ່ງເຖິງ) ກຳເນີດສັດເດຍຣັດສານ ເຜດວິໄສ ຫຼື ຄົນໂຊກຮ້າຍ ຕ້ອງອາບັດທຸກກົດ

ພິກຂຸນີສາບແຊ່ງອະນຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໘໗໘] ໑. ພິກຂຸນີ ມຸ້ງອັດຖະ

໒. ພິກຂຸນີ ມຸ້ງທຳ

໓. ພິກຂຸນີ ມຸ້ງສັ່ງສອນ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ๘. ອັນທະກາຣະວັກ

## ສິກຂາບົດທີ ໑໐

### ວ່າດ້ວຍການຮ້ອງໄຫ້ທຸບຕີຕົນເອງ

### ເລື້ອງພິກຂຸນີຈັນທະກາລີ

[໙໗໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຈັນທະກາລີຜິດຖຽງກັບພິກຂຸນີທັງຫຼາຍແລ້ວຮ້ອງໄຫ້ທຸບຕີຕົນເອງ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຈັນທະກາລີຈຶ່ງຮ້ອງໄຫ້ທຸບຕີຕົນເອງນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຈັນທະກາລີຮ້ອງໄຫ້ທຸບຕີ ຕົນເອງ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈັນທະກາລີ ຈຶ່ງຮ້ອງໄຫ້ທຸບຕີຕົນເອງນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

**[໙໘໐] ກໍພິກຂຸນີໃດ ຮ້ອງໄຫ້ທຸບຕີຕົນເອງ ຕ້ອງອາບັດປາຈິດຕີ**

**ເລື້ອງພິກຂຸນີຈັນທະກາລີ ຈົບ**

### ສິກຂາບົດວິພັງ

[໙໘໑] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ຕົນເອງ ຄື ສະເພາະຕົນເອງ

ພິກຂຸນີຮ້ອງໄຫ້ທຸບຕີຕົນເອງ ຕ້ອງອາບັດປາຈິດຕີ ທຸບຕີ (ຕົນເອງ) ແຕ່ບໍ່ຮ້ອງໄຫ້ ຕ້ອງອາບັດທຸກກົດ ຮ້ອງໄຫ້ແຕ່ບໍ່ທຸບຕີ (ຕົນເອງ) ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໗໔] ໑. ພິກຂຸນີຖືກຄວາມເສື່ອມຍາດ ເສື່ອມໂພຄະ ຫຼື ໂຣກກຸ້ມລຸມ ຮ້ອງໄຫ້ແຕ່ບໍ່ທຸບຕີຕົນເອງ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑໐ ຈົບ**

**ອັນທະກາຣະວັກທີ ໔ ຈົບ**

# ໕. ນັກຄະວັກ

## ໝວດວ່າດ້ວຍການເປືອຍກາຍ

## ສິກຂາບົດທີ ໑

### ວ່າດ້ວຍການເປືອຍກາຍອາບນ້ຳ

### ເລື້ອງພິກຂຸນີຫຼາຍອົງ

[໗໗໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຫຼາຍອົງເປືອຍກາຍອາບນ້ຳໃນແມ່ນ້ຳອະຈິຣະວະດີທ່າດຽວກັບຍິງແພດສະຫຍາ ພວກຍິງແພດສະຫຍາເຍາະເຍີ້ຍພິກຂຸນີເຫຼົ່ານັ້ນວ່າ "ແມ່ເຈົ້າທັງຫຼາຍ ພວກທ່ານຍັງເປັນສາວ ຈະປະພຶດພົມມະຈັນໄປເຮັດຫຍັງ ກັນທຳມະດາມະນຸດຄວນບໍຣິໂພກກາມບໍ່ແມ່ນບໍ ຕໍ່ເມື່ອຊະຣາພວກທ່ານຈຶ່ງຄ່ອຍປະພຶດພົມມະຈັນ

ເມື່ອເປັນແນວນີ້ ຊື່ວ່າໄດ້ຈັບສວຍເອົາປະໂຫຍດທັງສອງແລ້ວ" ພວກພິກຂຸນີຖືກພວກຍິງແພດສະຫຍາເຍາະເຍີ້ຍຕ່າງເກີ້ເຂີນ ເມື່ອກັບໄປສໍານັກແລ້ວຈຶ່ງບອກເລື້ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້ ພວກພິກຂຸນີໄດ້ບອກເລື້ອງນີ້ໃຫ້ພິກຂຸທັງຫຼາຍຮູ້ ພວກພິກຂຸໄດ້ນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທໍາມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ເຮົາຈະບັນຍັດສິກຂາບົດແກ່ພິກຂຸນີທັງຫຼາຍ ໂດຍອາໄສອໍານາດປະໂຫຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ

ຯລຯ

໑໐. ເພື່ອເອື້ອເຟື້ອວິໄນ

ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໘໘໔] ກໍພິກຂຸນີໃດ ເປືອຍກາຍອາບນໍ້າ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໘໘໕] ຄໍາວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄໍາວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄໍາວ່າ ເປືອຍກາຍອາບນໍ້າ ຄື ບໍ່ນຸ່ງຜ້າ ຫຼື ບໍ່ຫົ່ມຜ້າອາບນໍ້າ ຕ້ອງອາບັດ ທຸກກົດໃນຂະນະທີ່ອາບ ອາບສໍາເລັດແລ້ວ ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໘໘໖] ໑. ພິກຂຸນີ ຖືກໂຈນລັກຈີວອນ ຫຼື ຈີວອນຫາຍ

໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໓. ພິກຂຸນີ ວິກົນຈະລິດ
໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑ ຈົບ**

# ໓. ນັກຄະວັກ

## ສິກຂາບົດທີ ໔

## ວ່າດ້ວຍການໃຊ້ຜ້າອາບນ້ຳບໍ່ໄດ້ຂະໜາດ

## ເລື້ອງພິກຂຸນີສັບພັກຄີ

[໗໗໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ພິກຂຸນີໃຊ້ຜ້າອາບນ້ຳ ພວກພິກຂຸນີສັບພັກຄີຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຜ້າອາບນ້ຳແລ້ວ" ພາກັນໃຊ້ຜ້າອາບນ້ຳບໍ່ໄດ້ຂະໜາດ ຍ່າງຫ່ງວຍ້ອຍຂ້າງໜ້າແດ່ຍ້ອຍຂ້າງຫຼັງແດ່

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີສັບພັກຄີ ຈຶ່ງໃຊ້ຜ້າອາບນ້ຳບໍ່ໄດ້ຂະໜາດນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີໃຊ້ຜ້າອາບນ້ຳບໍ່ໄດ້ຂະໜາດ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີສັບພັກຄີຈຶ່ງ ໃຊ້ຜ້າອາບນ້ຳບໍ່ໄດ້ຂະໜາດນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໗໗] ກໍພິກຂຸນີຜູ້ຈະໃຫ້ເຮັດຜ້າອາບນ້ຳ ເພິ່ງເຮັດໃຫ້ໄດ້ຂະໜາດ ຂະໜາດໃນຂໍ້ນັ້ນ ຄື ຍາວະ ໔ ຄືບ ກວ້າງ ໒ ຄືບ ໂດຍຄືບສຸຄົດ ເຮັດໃຫ້ເກີນຂະໜາດນັ້ນ ຕ້ອງອາບັດປາຈິດຕີທີ່ຊື່ວ່າເສທະນະກະ

### ເລື້ອງພິກຂຸນີສັບພັກຄີ ຈົບ

## ສິກຂາບົດວິພັງ

[໗໗໘] ທີ່ຊື່ວ່າ ຜ້າອາບນ້ຳ ໄດ້ແກ່ ຜ້າທີ່ໃຊ້ນຸ່ງອາບນ້ຳ

ຄຳວ່າ ຜູ້ຈະໃຫ້ເຮັດ ອະທິບາຍວ່າ ພິກຂຸນີເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດ ເພິ່ງເຮັດໃຫ້ໄດ້ຂະໜາດ ຂະໜາດໃນຂໍ້ນັ້ນ ຄື ຍາວ ໔ ຄືບ ກວ້າງ ໒ ຄືບ ໂດຍຄືບສຸຄົດ ພິກຂຸນີເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດເກີນຂະໜາດນັ້ນ ຕ້ອງອາບັດທຸກກົດໃນຂະນະທີ່ເຮັດ ຕ້ອງອາບັດປາຈິດຕີ ຍ້ອນໄດ້ມາ ຕ້ອງຕັດຂອງນັ້ນເສຍກ່ອນແລ້ວສະແດງອາບັດ

## ບົດພາຊະນີ

## ປາຈິດຕີ

[໗໘໐] ພິກຂຸນີ ເຮັດຜ້າອາບນ້ຳທີ່ຕົນເຮັດຄ້າງໄວ້ຕໍ່ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດປາຈິດຕີ

ພິກຂຸນີໃຊ້ຜູ້ອື່ນໃຫ້ເຮັດຜ້າອາບນ້ຳທີ່ຕົນເຮັດຄ້າງໄວ້ຕໍ່ຈົນສຳເລັດ ຕ້ອງອາບັດປາຈິດຕີ

ພິກຂຸນີເຮັດຜ້າອາບນ້ຳທີ່ຜູ້ອື່ນເຮັດຄ້າງໄວ້ຕໍ່ຈົນສຳເລັດດ້ວຍຕົນເອງ ຕ້ອງອາບັດປາຈິດຕີ

ພິກຂຸນີໃຊ້ຜູ້ອື່ນໃຫ້ເຮັດຜ້າອາບນ້ຳທີ່ຜູ້ອື່ນເຮັດຄ້າງໄວ້ຕໍ່ຈົນສຳເລັດ ຕ້ອງອາບັດປາຈິດຕີ

## ທຸກະທຸກກົດ

ພິກຂຸນີເຮັດເອງ ຫຼື ໃຊ້ຜູ້ອື່ນໃຫ້ເຮັດເພື່ອປະໂຫຍດແກ່ຜູ້ອື່ນ ຕ້ອງອາບັດທຸກກົດ

ພິກຂຸນີໄດ້ຜ້າອາບນ້ຳທີ່ຜູ້ອື່ນເຮັດໄວ້ມາໃຊ້ສອຍ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໘໑] ໑. ພິກຂຸນີ ເຮັດຜ້າອາບນ້ຳໄດ້ຂະໜາດ

໔. ພິກຂຸນີ ເຮັດຜ້າອາບນ້ຳຍ່ອນກວ່າຂະໜາດ
໓. ພິກຂຸນີ ໄດ້ຜ້າອາບນ້ຳທີ່ຜູ້ອື່ນເຮັດໄວ້ເກີນຂະໜາດມາຕັດໃຫ້ໄດ້ຂະໜາດ ແລ້ວໃຊ້ສອຍ
໔. ພິກຂຸນີ ເຮັດເປັນເພດານ ຜ້າປູພື້ນ ຜ້າມ່ານ ຜ້າເປືອກຟູກ ຫຼື ໝອນ
໕. ພິກຂຸນີ ວິກົນຈະລິດ
໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

# ໓. ນັກຄະວັກ

## ສິກຂາບົດທີ ໑

### ວ່າດ້ວຍການເລາະຈີວອນແລ້ວບໍ່ຫຍິບ

### ເລື້ອງພິກຂຸນີຖຸນລະນັນທາ

[໗໙໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີອົງໜຶ່ງເຮັດຈີວອນບໍ່ດີ ຫຍິບບໍ່ດີທັງທີ່ໃຊ້ຜ້າສຳລັບເຮັດຈີວອນລາຄາແພງ ພິກຂຸນີຖຸນລະນັນທາໄດ້ກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ “ແມ່ເຈົ້າ ຜ້າສຳລັບເຮັດຈີວອນຂອງທ່ານດີແທ້ ແຕ່ກັບເຮັດຈີວອນບໍ່ດີ ຫຍິບບໍ່ດີ”

ພິກຂຸນີນັ້ນກ່າວວ່າ “ແມ່ເຈົ້າ ເຮົາຈະເລາະອອກ ທ່ານຈະຫຍິບໃຫ້ບໍ?”

ພິກຂຸນີຖຸນລະນັນທາກ່າວວ່າ “ແມ່ເຈົ້າ ເຮົາຈະຫຍິບໃຫ້”

ເມື່ອແລ້ວ ພິກຂຸນີນັ້ນຈຶ່ງເລາະຈີວອນແລ້ວມອບໃຫ້ພິກຂຸນີຖຸນລະນັນທາ ພິກຂຸນີຖຸນລະນັນທາ ກ່າວວ່າ “ເຮົາຈະຫຍິບໃຫ້ ເຮົາຈະຫຍິບໃຫ້” ແຕ່ບໍ່ຫຍິບໃຫ້ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຫຍິບ ພິກຂຸນີນັ້ນຈຶ່ງບອກເລື້ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້

ບັນດາພິກຂຸນີຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງໃຫ້ເລາະຈີວອນຂອງພິກຂຸນີແລ້ວບໍ່ຫຍິບໃຫ້ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຫຍິບນໍ” ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາໃຫ້ເລາະຈີວອນຂອງພິກຂຸນີແລ້ວບໍ່ຫຍິບໃຫ້ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຫຍິບ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯลฯ

ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາຈຶ່ງໃຫ້ເລາະຈີວອນຂອງພິກຂຸນີແລ້ວບໍ່ຫຍິບໃຫ້ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຫຍິບນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯลฯ" ແລ້ວ ຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໙໓] ກໍພິກຂຸນີໃດເລາະ ຫຼື ໃຊ້ໃຫ້ເລາະຈີວອນຂອງພິກຂຸນີແລ້ວ ພາຍຫຼັງ ພິກຂຸນີນັ້ນຜູ້ບໍ່ມີອັນຕະລາຍ[໑] ບໍ່ຫຍິບ ບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຫຍິບ ພົ້ນ ໔-໕ ວັນ[໒] ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໗໙໔] ຄຳວ່າ ກໍ ฯลฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯลฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ฯลฯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ฯลฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ຂອງພິກຂຸນີ ໄດ້ແກ່ ພິກຂຸນີອົງອື່ນ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ໖ ຊະນິດ ຢ່າງໃດຢ່າງໜຶ່ງ

ຄຳວ່າ ເລາະ ຄື ເລາະດ້ວຍຕົນເອງ

ຄຳວ່າ ໃຊ້ໃຫ້ເລາະ ຄື ໃຊ້ຜູ້ອື່ນໃຫ້ເລາະ

ຄຳວ່າ ພາຍຫຼັງ ພິກຂຸນີນັ້ນຜູ້ບໍ່ມີອັນຕະລາຍ ຄື ເມື່ອບໍ່ມີອັນຕະລາຍ

ຄຳວ່າ ບໍ່ຫຍິບ ຄື ບໍ່ຫຍິບດ້ວຍຕົນເອງ

ຄຳວ່າ ບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຫຍິບ ຄື ບໍ່ສັ່ງຜູ້ອື່ນ

ຄຳວ່າ ພົ້ນ ໔-໕ ວັນ ຄື ເກັບໄວ້ໄດ້ ໔-໕ ວັນ ຍ້ອນຖືເປົາວ່າ "ເຮົາຈັກບໍ່ຫຍິບ ຈັກບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຫຍິບ" ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕິ

[໗໙໕] ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ເລາ ະຫຼື ໃຊ້ໃຫ້ເລາະຈີວອນ ພາຍຫຼັງພິກຂຸນີນັ້ນຜູ້ບໍ່ມີອັນຕະລາຍ ບໍ່ຫຍິບ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຫຍິບ ພົ້ນ ໔-໕ ວັນ ຕ້ອງອາບັດປາຈິດຕິ

ອຸປະສຳບັນ ພິກຂຸນີບໍ່ແນ່ໃຈ ເລາະ ຫຼື ໃຊ້ໃຫ້ເລາະຈີວອນ ພາຍຫຼັງພິກຂຸນີນັ້ນຜູ້ບໍ່ມີອັນຕະລາຍ ບໍ່ຫຍິບ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຫຍິບ ພົ້ນ ໔-໕ ວັນ ຕ້ອງອາບັດປາຈິດຕິ

ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ເລາະ ຫຼື ໃຊ້ໃຫ້ເລາະຈີວອນ ພາຍຫຼັງ ພິກຂຸນີນັ້ນຜູ້ບໍ່ມີອັນຕະລາຍ ບໍ່ຫຍິບ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຫຍິບ ພົ້ນ ໔-໕ ວັນ ຕ້ອງອາບັດປາຈິດຕິ

## ທຸກກົດ

ພິກຂຸນີເລາະ ຫຼື ໃຊ້ໃຫ້ເລາະບໍຣິຂານຢ່າງອື່ນ ພາຍຫຼັງພິກຂຸນີນັ້ນຜູ້ບໍ່ມີອັນຕະລາຍ ບໍ່ຫຍິບ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຫຍິບ ພົ້ນ ໔-໕ ວັນ ຕ້ອງອາບັດທຸກກົດ

ພິກຂຸນີເລາະ ຫຼື ໃຊ້ໃຫ້ເລາະຈີວອນ ຫຼື ບໍຣິຂານຢ່າງອື່ນຂອງອະນຸປະສຳບັນ ພາຍຫຼັງ ພິກຂຸນີນັ້ນຜູ້ບໍ່ມີອັນຕະລາຍ ບໍ່ຫຍິບ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຫຍິບ ພົ້ນ ໔-໕ ວັນຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໙໖] ໑. ພິກຂຸນີ ບໍ່ຫຍິບໃນເມື່ອມີອັນຕະລາຍ

໒. ພິກຂຸນີ ສະແຫວງຫາແລ້ວບໍ່ໄດ້

໓. ພິກຂຸນີ ກຳລັງທຳການຫຍິບ ພົ້ນ ໔-໕ ວັນ

໔. ພິກຂຸນີ ຜູ້ເປັນໄຂ້

໕. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໖. ພິກຂຸນີ ວິກົນຈະລິດ

໗. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໓ ຈົບ**

# ៦. ນັກຄະວັກ

## ສິກຂາບົດທີ ៨

## ວ່າດ້ວຍການບໍ່ຜັດປ່ຽນສັງຄາຕິຕາມກຳນົດ

## ເລື້ອງພິກຂຸນີຫຼາຍອົງ

[໗໙໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍຝາກຈີວອນໄວ້ກັບພວກພິກຂຸນີ ມີພຽງອຸດຕະຣາສົງກັບອັນຕະຣະວາສົກຫຼີກຈາຣິກໄປສູ່ຊົນນະບົດ ຈີວອນນັ້ນເກັບໄວ້ດົນຈຶ່ງຂຶ້ນຣາ ພວກພິກຂຸນີ (ທີ່ຮັບຝາກ) ຈຶ່ງນຳອອກຕາກແດດ ພິກຂຸນີທັງຫຼາຍໄດ້ກ່າວກັບພິກຂຸນີ (ທີ່ຮັບຝາກ) ເຫຼົ່ານັ້ນດັ່ງນີ້ວ່າ "ແມ່ເຈົ້າທັງຫຼາຍ ຈີວອນທີ່ຂຶ້ນຣາເຫຼົ່ານີ້ເປັນຂອງໃຜ" ລຳດັບນັ້ນ ພວກພິກຂຸນີ(ທີ່ຮັບຝາກ)ຈຶ່ງບອກເລື້ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີທັງຫຼາຍຈຶ່ງຝາກຈີວອນໄວ້ກັບພວກພິກຂຸນີແລ້ວ ມີພຽງອຸດຕະຣາສົງກັບອັນຕະຣະວາສົກ ຈາຣິກໄປສູ່ຊົນນະບົດນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີທັງຫຼາຍຝາກຈີວອນໄວ້ກັບພວກພິກຂຸນີແລ້ວມີພຽງອຸດຕະຣາສົງກັບອັນຕະຣະວາສົກຈາຣິກໄປສູ່ຊົນນະບົດ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍເປັນຫຍັງ ພິກຂຸນີຈຶ່ງຝາກຈີວອນໄວ້ກັບພິກຂຸນີແລ້ວມີພຽງອຸດຕະຣາສົງ ກັບອັນຕະຣະວາສົກຈາຣິກໄປສູ່ຊົນນະບົດນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໙໘] ກໍພິກຂຸນີໃດ ໃຫ້ວານຜັດປ່ຽນສັງຄາຕິ ທີ່ມີກຳນົດໄລຍະເວລາ ៥ ວັນລ່ວງເລີຍໄປ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຫຼາຍອົງ ຈົບ**

## ສິກຂາບົດວິພັງ

[໗໙໙] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ໃຫ້ວານຜັດປ່ຽນສັງຄາຕິທີ່ມີກຳນົດໄລຍະເວລາ ໕ ວັນລ່ວງເລີຍໄປ ອະທິບາຍວ່າ ບໍ່ນຸ່ງ ບໍ່ຫົ່ມ ບໍ່ຕາກຈີວອນ ໕ ຜືນ ສິ້ນວັນທີ ໕ ຄືໃຫ້ລ່ວງເລີຍໄປເປັນວັນທີ ໕ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ປາຈິດຕີ

[໙໐໐] ລ່ວງເລີຍ ໕ ວັນ ພິກຂຸນີສຳຄັນວ່າລ່ວງເລີຍ ໕ ວັນແລ້ວ ຕ້ອງອາບັດປາຈິດຕີ

ລ່ວງເລີຍ ໕ ວັນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດປາຈິດຕີ

ລ່ວງເລີຍ ໕ ວັນ ພິກຂຸນີສຳຄັນວ່າຍັງບໍ່ລ່ວງເລີຍ ຕ້ອງອາບັດປາຈິດຕີ

## ທຸກະທຸກກົດ

ຍັງບໍ່ລ່ວງເລີຍ ໕ ວັນ ພິກຂຸນີສຳຄັນວ່າລ່ວງເລີຍແລ້ວ ຕ້ອງອາບັດທຸກກົດ

ຍັງບໍ່ລ່ວງເລີຍ ໕ ວັນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ຍັງບໍ່ລ່ວງເລີຍ ໕ ວັນ ພິກຂຸນີສຳຄັນວ່າຍັງບໍ່ລ່ວງເລີຍ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໐໑] ໑. ພິກຂຸນີ ນຸ່ງ ຫົ່ມຈີວອນ ໕ ຜືນ ຫຼື ນຳອອກຕາກແດດໃນວັນທີ ໕

໒. ພິກຂຸນີ ຜູ້ເປັນໄຂ້

໓. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

# ໓. ນັກຄະວັກ

## ສິກຂາບົດທີ ໕

## ວ່າດ້ວຍການຫົ່ມຈີວອນສັບປ່ຽນກັນ

### ເລື້ອງພິກຂຸນີອົງໜຶ່ງ

[໘໐໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີອົງໜຶ່ງທ່ຽວບິນທະບາດແລ້ວຕາກຈີວອນທີ່ປຽກຊຸ່ມ ແລ້ວເຂົ້າວິຫານ ພິກຂຸນີອີກອົງໜຶ່ງຫົ່ມຈີວອນຜືນນັ້ນເຂົ້າໄປບິນທະບາດໃນໝູ່ບ້ານ ພິກຂຸນີ (ເຈົ້າຂອງຈີວອນ) ນັ້ນອອກມາຖາມພິກຂຸນີທັງຫຼາຍວ່າ "ແມ່ເຈົ້າທັງຫຼາຍເຫັນຈີວອນຂອງຂ້ານ້ອຍແດ່ບໍ?" ພິກຂຸນີທັງຫຼາຍບອກເລື້ອງນັ້ນໃຫ້ພິກຂຸນີນັ້ນຮູ້ ລຳດັບນັ້ນ ພິກຂຸນີນັ້ນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງຫົ່ມຈີວອນຂອງເຮົາໂດຍບໍ່ບອກນໍ" ແລ້ວບອກເລື້ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງຫົ່ມຈີວອນຂອງພິກຂຸນີອື່ນໂດຍບໍ່ບອກນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຫົ່ມຈີວອນຂອງພິກຂຸນີອື່ນໂດຍບໍ່ບອກ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີ ຈຶ່ງຫົ່ມຈີວອນຂອງພິກຂຸນີອື່ນໂດຍບໍ່ບອກນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວ ຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໘໐໓] ກໍ ພິກຂຸນີໃດ ຫົ່ມຈີວອນສັບປ່ຽນກັນ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີອົງໜຶ່ງ ຈົບ**

## ສິກຂາບົດວິພັງ

[໙໐໔] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຈີວອນສັບປ່ຽນກັນ ໄດ້ແກ່ ຈີວອນ ໕ ຜືນ ຢ່າງໃດຢ່າງໜຶ່ງຂອງອຸປະສຳບັນ

ພິກຂຸນີນຸ່ງ ຫຼື ຫົ່ມຈີວອນນັ້ນ ທີ່ເຈົ້າຂອງບໍ່ໄດ້ໃຫ້ ຫຼື ໂດຍບໍ່ໄດ້ບອກກ່າວ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໙໐໕] ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ຫົ່ມຈີວອນສັບປ່ຽນກັນ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸນີບໍ່ແນ່ໃຈ ຫົ່ມຈີວອນສັບປ່ຽນກັນ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ຫົ່ມຈີວອນສັບປ່ຽນກັນ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸນີຫົ່ມຈີວອນສັບປ່ຽນກັນກັບອະນຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໐໖] ໑. ພິກຂຸນີ ນຸ່ງ ຫຼື ຫົ່ມຈີວອນທີ່ເຈົ້າຂອງໃຫ້ ຫຼື ພິກຂຸນີນຸ່ງ ຫຼື ຫົ່ມຈີວອນນັ້ນໂດຍບອກເຈົ້າຂອງກ່ອນ

໔. ພິກຂຸນີ ມີຈີວອນຖືກຊິງໄປ

໖. ພິກຂຸນີ ມີຈີວອນສູນຫາຍ

໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໕. ພິກຂຸນີ ວິກົນຈະລິດ
໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໕ ຈົບ**

# ໖. ນັກຄະວັກ

## ສິກຂາບົດທີ ໖

### ວ່າດ້ວຍການເຮັດອັນຕະລາຍແກ່ຈີວອນລາບຂອງຄະນະ

### ເລື້ອງພິກຂຸນີຖຸນລະນັນທາ

[໘໐໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ຕະກູນອຸປັດຖາກຂອງພິກຂຸນີຖຸນລະນັນທາໄດ້ກ່າວກັບພິກຂຸນີຖຸນລະນັນທາດັ່ງນີ້ວ່າ "ແມ່ເຈົ້າ ພວກເຮົາຈະຖວາຍຈີວອນແກ່ພິກຂຸນີສົງ"

ພິກຂຸນີຖຸນລະນັນທາກ່າວວ່າ "ພວກທ່ານມີກິດຫຼາຍ ມີສິ່ງທີ່ຕ້ອງເຮັດຫຼາຍ" ໄດ້ເຮັດອັນຕະລາຍ (ແກ່ລາບຂອງຄະນະ) ຕໍ່ມາ ເຮືອນຕະກູນນັ້ນຖືກໄຟໄໝ້ ພວກເຂົາຕຳໜິປະນາມໂພນທະນາວ່າ "ເປັນຫຍັງ ພິກຂຸນີຖຸນລະນັນທາ ຈຶ່ງເຮັດອັນຕະລາຍວັດຖຸທານຂອງພວກເຮົານໍ ພວກເຮົາຕ້ອງຄາດຈາກສົມບັດທັງສອງ ຄື ໂພຄະສົມບັດແລະບຸນສົມບັດ"

ພິກຂຸນີທັງຫຼາຍ ໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາ ຈຶ່ງເຮັດອັນຕະລາຍແກ່ຈີວອນທີ່ຄະນະຈະເພິ່ງໄດ້ນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາເຮັດອັນຕະລາຍແກ່ຈີວອນທີ່ຄະນະຈະເພິ່ງໄດ້ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້

ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາ ຈຶ່ງເຮັດອັນຕະລາຍແກ່ຈີວອນທີ່ຄະນະຈະເພິ່ງໄດ້ນໍ ພິກຂຸທັງຫຼາຍ ການເຮັດແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໙໐໗] ກໍ ພິກຂຸນີໃດ ເຮັດອັນຕະລາຍແກ່ຈີວອນທີ່ຄະນະຈະເພິ່ງໄດ້ ຕ້ອງອາບັດປາຈິດຕີ

### ເລື່ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໙໐໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຄະນະ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງພິກຂຸນີສົງ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ໖ ຊະນິດ ຢ່າງໃດຢ່າງໜຶ່ງເຊິ່ງມີຂະໜາດພໍທີ່ຈະວິກັບໄດ້ເປັນຢ່າງຕໍ່າ

ຄຳວ່າ ເຮັດອັນຕະລາຍ ຄື ເຮັດອັນຕະລາຍດ້ວຍກ່າວວ່າ "ຊົນທັງຫຼາຍຈະເພິ່ງຖວາຍຈີວອນນີ້ໄດ້ຢ່າງໃດກັນ" ຕ້ອງອາບັດປາຈິດຕີ ເຮັດອັນຕະລາຍບໍຣິຂານຢ່າງອື່ນ ຕ້ອງອາບັດທຸກກົດ ເຮັດອັນຕະລາຍຈີວອນ ຫຼື ບໍຣິຂານຢ່າງອື່ນຂອງພິກຂຸນີຫຼາຍອົງ ພິກຂຸນີອົງດຽວ ຫຼືຂອງອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໑໐] ໑. ພິກຂຸນີ ສະແດງອານິສົງແລ້ວກ່າວຫ້າມ

໔. ພິກຂຸນີ ວິກົນຈະລິດ

໖. ພິກຂຸນີ ຕົ້ນບັນຍັດ

### ສິກຂາບົດທີ ໖ ຈົບ

# ៦. ນັກຄະວັກ

## ສິກຂາບົດທີ ໗
## ວ່າດ້ວຍການຄັດຄ້ານການແຈກຈີວອນທີ່ຊອບທຳ
## ເລື້ອງພິກຂຸນີຖຸນລະນັນທາ

[໗໑໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ອະກາລະຈີວອນເກີດຂຶ້ນແກ່ພິກຂຸນີສົງ ລຳດັບນັ້ນ ພິກຂຸນີສົງປະສົງຈະແຈກຈີວອນນັ້ນ ຈຶ່ງປະຊຸມກັນ ເວລານັ້ນພວກພິກຂຸນີອັນເຕວາສິນີຂອງພິກຂຸນີຖຸນລະນັນທາຫຼີກໄປແລ້ວ ພິກຂຸນີຖຸນລະນັນທາໄດ້ກ່າວກັບພິກຂຸນີເຫຼົ່ານັ້ນດັ່ງນີ້ວ່າ "ແມ່ເຈົ້າທັງຫຼາຍ ພິກຂຸນີທັງຫຼາຍຫຼີກໄປແລ້ວ ຢ່າຟ້າວແຈກຈີວອນເລີຍ" ຄັດຄ້ານການແຈກຈີວອນ

ພວກພິກຂຸນີກ່າວວ່າ "ຢ່າຟ້າວແຈກຈີວອນເລີຍ" ແລ້ວແຍກຍ້າຍກັນໄປ ເມື່ອເຫຼົ່າພິກຂຸນີອັນເຕວາສິນີກັບມາ ພິກຂຸນີຖຸນລະນັນທາຈຶ່ງໃຫ້ແຈກຈີວອນນັ້ນ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງຄັດຄ້ານການແຈກຈີວອນທີ່ຊອບທຳນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາຄັດຄ້ານການແຈກຈີວອນທີ່ຊອບທຳ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາ ຈຶ່ງຄັດຄ້ານການແຈກຈີວອນທີ່ຊອບທຳນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໑໘] ກໍ ພິກຂຸນີໃດ ຄັດຄ້ານການແຈກຈີວອນທີ່ຊອບທຳ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຖຸນລະນັນທາ ຈົບ**

## ສິກຂາບົດວິພັງ

[໙໑໓] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ການແຈກຈີວອນທີ່ຊື່ວ່າ ຊອບທຳ ໄດ້ແກ່ ພິກຂຸນີສົງຜູ້ພ້ອມພຽງກັນ ປະຊຸມກັນແຈກ

ຄຳວ່າ ຄັດຄ້ານ ຄື ຄັດຄ້ານວ່າ "ຈະແຈກຈີວອນນີ້ຢ່າງໃດ" ຕ້ອງອາບັດປາຈິດຕີ

## ບົດພາຊະນີ

[໙໑໔] ການແຈກຊອບທຳ ພິກຂຸນີສຳຄັນວ່າຊອບທຳ ຄັດຄ້ານ ຕ້ອງອາບັດ ປາຈິດຕີ

ການແຈກຊອບທຳ ພິກຂຸນີບໍ່ແນ່ໃຈ ຄັດຄ້ານ ຕ້ອງອາບັດທຸກກົດ

ການແຈກຊອບທຳ ພິກຂຸນີສຳຄັນວ່າບໍ່ຊອບທຳ ຄັດຄ້ານ ບໍ່ຕ້ອງອາບັດ

ການແຈກຊອບທຳ ພິກຂຸນີສຳຄັນວ່າຊອບທຳ ຄັດຄ້ານ ຕ້ອງອາບັດທຸກກົດ

ການແຈກບໍ່ຊອບທຳ ພິກຂຸນີບໍ່ແນ່ໃຈ ຄັດຄ້ານ ຕ້ອງອາບັດທຸກກົດ

ການແຈກບໍ່ຊອບທຳ ພິກຂຸນີສຳຄັນວ່າບໍ່ຊອບທຳ ຄັດຄ້ານ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໑໕] ໑. ພິກຂຸນີສະແດງອານິສົງແລ້ວຄັດຄ້ານ

໔. ພິກຂຸນີວິກົນຈະລິດ

໓. ພິກຂຸນີຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ៦. ນັກຄະວັກ

## ສິກຂາບົດທີ ໗

## ວ່າດ້ວຍການໃຫ້ສະມະນະຈີວອນແກ່ຜູ້ບໍ່ແມ່ນພິກຂຸນີ

## ເລື້ອງພິກຂຸນີຖຸນລະນັນທາ

[໙໑໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາໃຫ້ສະມະນະຈີວອນແກ່ພວກຄູນັກຟ້ອນແດ່ ພວກນັກຟ້ອນແດ່ ພວກໂຕນໄມ້ຄ້ຳແດ່ ພວກມາຍາກົນແດ່ ພວກຕີກອງແດ່ ກ່າວວ່າ "ພວກທ່ານຈົ່ງກ່າວພັນນາຄຸນຂອງເຮົາໃນຊຸມນຸມຊົນ" ພວກຄູນັກຟ້ອນແດ່ ພວກນັກຟ້ອນແດ່ ພວກໂຕນໄມ້ຄ້ຳແດ່ ພວກມາຍາກົນແດ່ ພວກຕີກອງແດ່ ຕ່າງກ່າວພັນນາຄຸນຂອງພິກຂຸນີຖຸນລະນັນທາໃນຊຸມນຸມຊົນວ່າ "ແມ່ເຈົ້າຖຸນລະນັນທາເປັນພະຫູສູດ ເປັນນັກເວົ້າແກ່ກ້າ ສາມາດກ່າວທຳມີກະຖາ ພວກທ່ານຈົ່ງຖວາຍ ຈົ່ງກະທຳ (ສັກກາຣະ) ແກ່ທ່ານ"

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງໃຫ້ສະມະນະຈີວອນແກ່ຊາວບ້ານນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າ ໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ"ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາໃຫ້ສະມະນະຈີວອນແກ່ຊາວບ້ານ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາຈຶ່ງໃຫ້ສະມະນະຈີວອນແກ່ຊາວບ້ານນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງ ຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໙໑໗] ກໍພິກຂຸນີໃດ ໃຫ້ສະມະນະຈີວອນແກ່ຊາວບ້ານ ແກ່ປະຣິພາຊົກ ຫຼື ປະຣິພາຊິກາ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຖຸນລະນັນທາ ຈົບ**

## ສິກຂາບົດວິພັງ

[໙໑໗] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຊາວບ້ານ ໄດ້ແກ່ ຜູ້ຄອງເຮືອນຄົນໃດຄົນໜຶ່ງ

ທີ່ຊື່ວ່າ ປະຣິພາຊົກ ໄດ້ແກ່ ນັກບວດຊາຍຄົນໃດຄົນໜຶ່ງຜູ້ຢູ່ໃນລັດທິປະຣິພາຊົກ ຍົກເວັ້ນພິກຂຸແລະສາມະເນນ

ທີ່ຊື່ວ່າ ປະຣິພາຊິກາ ໄດ້ແກ່ ນັກບວດຍິງຄົນໃດຄົນໜຶ່ງຜູ້ຢູ່ໃນລັດທິປະຣິພາຊິກາ ຍົກເວັ້ນພິກຂຸນີ ສິກຂະມານາ ແລະສາມະເນຣີ

ທີ່ຊື່ວ່າ ສະມະນະຈີວອນ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຜ້າທີ່ເຮັດກັບປະແລ້ວ ພິກຂຸນີໃຫ້ຜ້ານັ້ນ ຕ້ອງອາບັດປາຈິດຕີ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໑໙] ໑. ພິກຂຸນີ ໃຫ້ແກ່ມານດາ ບິດາ

໒. ພິກຂຸນີ ໃຫ້ເປັນຂອງຢືມ

໓. ພິກຂຸນີ ວິກົນຈະລິດ

໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ໓. ນັກຄະວັກ

## ສິກຂາບົດທີ ໙

## ວ່າດ້ວຍການໃຫ້ລ່ວງເລີຍສະໄໝແຫ່ງຈີວອນການ ເລື້ອງພິກຂຸນີຖຸນລະນັນທາ

[໙໔໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ຕະກູນອຸປັດຖາກຂອງພິກຂຸນີ

ຖຸນລະນັນທາໄດ້ກ່າວກັບພິກຂຸນີຖຸນລະນັນທາດັ່ງນີ້ວ່າ "ແມ່ເຈົ້າ ຖ້າພວກຂ້ານ້ອຍສາມາດ ກໍຈະຖວາຍຈີວອນແກ່ພິກຂຸນີສົງ" ເມື່ອພິກຂຸນີທັງຫຼາຍຈຳພັນສາແລ້ວປະຊຸມກັນດ້ວຍປະສົງ ຈະແຈກຈີວອນ ພິກຂຸນີຖຸນລະນັນທາໄດ້ກ່າວກັບພິກຂຸນີເຫຼົ່ານັ້ນດັ່ງນີ້ວ່າ "ແມ່ເຈົ້າທັງຫຼາຍໂຜດຖ້າກ່ອນພິກຂຸນີສົງມີຄວາມຫວັງໃນຈີວອນ"

ພິກຂຸນີທັງຫຼາຍ ໄດ້ກ່າວກັບພິກຂຸນີຖຸນລະນັນທາດັ່ງນີ້ວ່າ "ແມ່ເຈົ້າ ເຊີນທ່ານໄປສືບເບິ່ງຈີວອນນັ້ນໃຫ້ຮູ້ເລື້ອງ"

ພິກຂຸນີຖຸນລະນັນທາເຂົ້າໄປເຖິງຕະກູນນັ້ນ ເມື່ອເຖິງແລ້ວໄດ້ກ່າວກັບຄົນເຫຼົ່ານັ້ນດັ່ງນີ້ວ່າ "ທ່ານທັງຫຼາຍຈົ່ງຖວາຍຈີວອນແກ່ພິກຂຸນີສົງ"

ຄົນເຫຼົ່ານັ້ນກ່າວວ່າ "ພວກຂ້ານ້ອຍຍັງບໍ່ສາມາດທີ່ຈະຖວາຍຈີວອນແກ່ພິກຂຸນີສົງ"

ພິກຂຸນີຖຸນລະນັນທານຳເລື້ອງນັ້ນ ໄປບອກໃຫ້ພິກຂຸນີທັງຫຼາຍຮູ້ ບັນດາພິກຂຸນີຜູ້ ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈິ່ງໃຫ້ລ່ວງເລີຍສະໄໝແຫ່ງຈີວອນການ[໑]ດ້ວຍຄວາມຫວັງໃນຈີວອນທີ່ເລື່ອນລອຍ[໒]ນໍ" ເມື່ອແລ້ວ ພິກຂຸນີ ເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາໃຫ້ລ່ວງເລີຍສະໄໝແຫ່ງຈີວອນການຜ່ານໄປດ້ວຍຄວາມຫວັງໃນຈີວອນທີ່ເລື່ອນລອຍ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາຈິ່ງໃຫ້ລ່ວງເລີຍສະໄໝແຫ່ງຈີວອນການຜ່ານໄປດ້ວຍຄວາມ ຫວັງໃນຈີວອນທີ່ເລື່ອນລອຍນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈິ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໘໑] ກໍພິກຂຸນີໃດ ໃຫ້ລ່ວງເລີຍສະໄໝແຫ່ງຈີວອນການດ້ວຍຄວາມຫວັງໃນຈີວອນທີ່ເລື່ອນລອຍ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຖຸນລະນັນທາ ຈົບ**

## ສິກຂາບົດວິພັງ

[໙໔໔] ຄຳວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໆລໆ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະ

ຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຄວາມຫວັງໃນຈີວອນທີ່ເລື່ອນລອຍ ໄດ້ແກ່ ທີ່ທາຍົກເປັ່ງວາຈາປະວາຣະນາວ່າ “ຖ້າພວກເຮົາສາມາດ ກໍຈະຖວາຍ ຈະເຮັດ”

ທີ່ຊື່ວ່າ ສະໄໝແຫ່ງຈີວອນການ ຄື ເມື່ອຍັງບໍ່ໄດ້ການກະຖິນ ມີກຳນົດ ໑ ເດືອນ ທ້າຍລະດູຝົນ ເມື່ອໄດ້ການກະຖິນແລ້ວມີກຳນົດ ໕ ເດືອນ

ຄຳວ່າ ໃຫ້ລ່ວງເລີຍສະໄໝແຫ່ງຈີວອນການ ຄວາມວ່າ ເມື່ອຍັງບໍ່ໄດ້ການກະຖິນ ໃຫ້ລ່ວງເລີຍ ວັນສຸດທ້າຍລະດູຝົນ ຕ້ອງອາບັດປາຈິດຕີ ເມື່ອໄດ້ການກະຖິນແລ້ວ ໃຫ້ລ່ວງເລີຍວັນທີ່ກະຖິນເດາະ[១] ຕ້ອງອາບັດປາຈິດຕີ

## ບົດພາຊະນີ

[໙໔໕] (ຄວາມຫວັງໃນ) ຈີວອນທີ່ເລື່ອນລອຍ ພິກຂຸນີສຳຄັນວ່າ (ເປັນຄວາມຫວັງໃນ) ຈີວອນທີ່ເລື່ອນລອຍ ໃຫ້ລ່ວງເລີຍສະໄໝຈີວອນການໄປ ຕ້ອງອາບັດປາຈິດຕີ

(ຄວາມຫວັງໃນ) ຈີວອນທີ່ເລື່ອນລອຍ ພິກຂຸນີບໍ່ແນ່ໃຈ ໃຫ້ລ່ວງເລີຍສະໄໝແຫ່ງຈີວອນການ ຕ້ອງອາບັດທຸກກົດ

(ຄວາມຫວັງໃນ) ຈີວອນທີ່ເລື່ອນລອຍ ພິກຂຸນີສຳຄັນວ່າເປັນ (ຄວາມຫວັງໃນ) ຈີວອນບໍ່ເລື່ອນລອຍ ໃຫ້ລ່ວງເລີຍສະໄໝແຫ່ງຈີວອນການ ບໍ່ຕ້ອງອາບັດ

(ຄວາມຫວັງໃນ) ຈີວອນທີ່ບໍ່ເລື່ອນລອຍ ພິກຂຸນີສຳຄັນວ່າເປັນ (ຄວາມຫວັງໃນ) ຈີວອນທີ່ເລື່ອນລອຍ ຕ້ອງອາບັດທຸກກົດ

(ຄວາມຫວັງໃນ) ຈີວອນທີ່ບໍ່ເລື່ອນລອຍ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

(ຄວາມຫວັງໃນ) ຈີວອນທີ່ບໍ່ເລື່ອນລອຍ ພິກຂຸນີສຳຄັນວ່າເປັນ (ຄວາມຫວັງໃນ) ຈີວອນທີ່ບໍ່ເລື່ອນລອຍ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໔໖] ໑. ພິກຂຸນີ ສະແດງອານິສົງແລ້ວຫ້າມ

໒. ພິກຂຸນີ ວິກົນຈະລິດ

໓. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໙ ຈົບ**

# ໓. ນັກຄະວັກ

## ສິກຂາບົດທີ ໑໐

### ວ່າດ້ວຍການຫ້າມການເດາະກະຖິນທີ່ຊອບທຳ

### ເລື້ອງອຸປາສິກຄົນໜຶ່ງ

[໘໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ອຸປາສິກຄົນໜຶ່ງໃຫ້ສ້າງວິຫານອຸທິດ (ຖວາຍ) ສົງ ໃນການສະຫຼອງວິຫານນັ້ນ ອຸປາສິກນັ້ນປະສົງຈະຖວາຍອະກາລະຈີວອນແກ່ ສົງທັງສອງຝ່າຍ ແຕ່ເວລານັ້ນສົງທັງສອງຝ່າຍການກະຖິນແລ້ວ ລຳດັບນັ້ນ ອຸປາສິກນັ້ນເຂົ້າໄປຫາສົງ ຂໍການເດາະກະຖິນ[๑] ພິກຂຸທັງຫຼາຍຈຶ່ງໄດ້ຂາບທູນເລື້ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດຕັດວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເດາະກະຖິນໄດ້"

### ວິທີການເດາະກະຖິນແລະກຳມະວາຈາເດາະກະຖິນ

ພິກຂຸທັງຫຼາຍເພິ່ງເດາະກະຖິນແບບນີ້ ຄື ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໘໕] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວກໍເພິ່ງເດາະກະຖິນນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງຍ່ອມເດາະກະຖິນ ທ່ານອົງໃດເຫັນດ້ວຍກັບການເດາະກະຖິນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງໂຈດ

ສົງເດາະກະຖິນແລ້ວ ສົງເຫັນດ້ວຍ ຍ້ອນແບບນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບບນີ້"

[໘໖] ຕໍ່ມາ ອຸປາສິກນັ້ນເຂົ້າໄປຫາພິກຂຸນີສົງ ຂໍເດາະກະຖິນ ພິກຂຸນີຖຸນລະນັນທາກ່າວວ່າ "ພວກເຮົາຈັກມີຈີວອນ" ຄັດຄ້ານການເດາະກະຖິນ ຄັ້ງນັ້ນ ອຸປາສິກນັ້ນຕຳໜິ ປະນາມໂພນທະນາວ່າ "ເປັນຫຍັງ ພິກຂຸນີທັງຫຼາຍຈຶ່ງບໍ່ໃຫ້ການເດາະກະຖິນແກ່ເຮົານໍ"

ພິກຂຸນີທັງຫຼາຍໄດ້ຍິນອຸປາສິກາຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ฯລฯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງຄັດຄ້ານການເດາະກະຖິນທີ່ຊອບທຳນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກ ພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພິກຂຸນີຖຸນລະນັນທາຄັດຄ້ານການເດາະກະຖິນທີ່ຊອບທຳ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາ ຈຶ່ງຄັດຄ້ານການເດາະກະຖິນທີ່ຊອບທຳນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດ ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໘໗] ກໍພິກຂຸນີໃດ ຄັດຄ້ານການເດາະກະຖິນທີ່ຊອບທຳ ຕ້ອງອາບັດປາຈິດຕີ

### ເລື່ອງອຸປາສິກາຄົນໜຶ່ງ ຈົບ

## ສິກຂາບົດວິພັງ

[໗໘໘] ຄຳວ່າ ກໍ ฯລฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ฯລฯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ການເດາະກະຖິນທີ່ຊື່ວ່າ ຊອບທຳ ຄື ພິກຂຸນີສົງຜູ້ພ້ອມພຽງກັນປະຊຸມກັນເດາະ

ຄຳວ່າ ຄັດຄ້ານ ຄື ຄັດຄ້ານວ່າ "ຈະເດາະກະຖິນໄດ້ຢ່າງໃດ" ຕ້ອງອາບັດປາຈິດຕີ

## ບົດພາຊະນີ

[໗໘໙] ການເດາະທີ່ຊອບທຳ ພິກຂຸນີສຳຄັນວ່າຊອບທຳ ຄັດຄ້ານ ຕ້ອງອາບັດປາຈິດຕີ

ການເດາະທີ່ຊອບທຳ ພິກຂຸນີບໍ່ແນ່ໃຈ ຄັດຄ້ານ ຕ້ອງອາບັດທຸກກົດ

ການເດາະທີ່ຊອບທຳ ພິກຂຸນີສຳຄັນວ່າບໍ່ຊອບທຳ ຄັດຄ້ານ ບໍ່ຕ້ອງອາບັດ

ການເດາະທີ່ບໍ່ຊອບທຳ ພິກຂຸນີສຳຄັນວ່າຊອບທຳ ຄັດຄ້ານ ຕ້ອງອາບັດທຸກກົດ
ການເດາະທີ່ບໍ່ຊອບທຳ ພິກຂຸນີບໍ່ແນ່ໃຈ ຄັດຄ້ານ ຕ້ອງອາບັດທຸກກົດ
ການເດາະທີ່ບໍ່ຊອບທຳ ພິກຂຸນີສຳຄັນວ່າບໍ່ຊອບທຳ ຄັດຄ້ານ ບໍ່ຕ້ອງອາບັດ

**ອະນາປັດຕິວານ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໓໑] ໑. ພິກຂຸນີ ສະແດງອານິສົງແລ້ວຫ້າມ
໔. ພິກຂຸນີ ວິກົນຈະລິດ
໓. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑໐ ຈົບ**

**ນັກຄະວັກທີ ໓ ຈົບ**

# ໔. ຕຸວັດຕະວັກ

## ໝວດວ່າດ້ວຍການນອນຮ່ວມກັນ

## ສິກຂາບົດທີ ໑

## ວ່າດ້ວຍການນອນເທິງຕຽງດຽວກັນ

## ເລື້ອງພິກຂຸນີນອນຮ່ວມກັນ ໔ ອົງ

[໙໓໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີ ໔ ອົງນອນເທິງຕຽງດຽວກັນ ຄົນທັງຫຼາຍທ່ຽວຈາຣິກໄປຕາມວິຫານເຫັນແລ້ວຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີ ໔ ອົງ ຈຶ່ງນອນເທິງຕຽງດຽວກັນເໝືອນແມ່ຍິງຄະລືຫັດຜູ້ບໍຣິໂພກກາມນໍ"

ພິກຂຸນີທັງຫຼາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີ ໔ ອົງຈຶ່ງນອນຕຽງດຽວກັນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີ ໒ ອົງນອນເທິງຕຽງດຽວກັນ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີ ໒ ອົງຈຶ່ງນອນເທິງຕຽງດຽວກັນນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໘໑໓] ກໍພິກຂຸນີເຫຼົ່າໃດ ໒ ອົງ ນອນເທິງຕຽງດຽວກັນ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີນອນຮ່ວມກັນ ໒ ອົງ ຈົບ**

## ສິກຂາບົດວິພັງ

[໘໑໔] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງເຫຼົ່າມາຕຸຄາມທີ່ອຸປະສົມບົດແລ້ວ

ຄຳວ່າ ໒ ອົງ ນອນເທິງຕຽງດຽວກັນ ຄື ເມື່ອອົງໜຶ່ງນອນ ອີກອົງໜຶ່ງກໍນອນ ຕ້ອງອາບັດປາຈິດຕີ ຫຼື ນອນພ້ອມກັນ ໒ ອົງ ຕ້ອງອາບັດປາຈິດຕີ ທັງ ໒ ອົງລຸກຂຶ້ນແລ້ວກັບນອນອີກ ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໘໑໕] ໑. ພິກຂຸນີອົງໜຶ່ງນອນ ອີກອົງໜຶ່ງນັ່ງ ຫຼື ນັ່ງທັງ ໒ ອົງ
໒. ພິກຂຸນີວິກົນຈະລິດ
໓. ພິກຂຸນີຕົ້ນບັນຍັດ

**ສິກຂາບົດທີ ໑ ຈົບ**

# ໘. ຕຸວັດຕະວັກ

## ສິກຂາບົດທີ ໘

## ວ່າດ້ວຍການໃຊ້ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ເລື້ອງພິກຂຸນີນອນຮ່ວມກັນ ໒ ອົງ

[໑໘໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນພິກຂຸນີ ໒ ອົງໃຊ້ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ນອນຮ່ວມກັນ ຄົນທັງຫຼາຍທ່ຽວຈາຣິກໄປຕາມວິຫານເຫັນແລ້ວຈຶ່ງ ຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີ ໒ ອົງຈຶ່ງໃຊ້ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ນອນຮ່ວມກັນເໝືອນແມ່ຍິງຄະລືຫັດຜູ້ບໍຣິໂພກກາມນໍ"

ພິກຂຸນີທັງຫຼາຍໄດ້ຍິນຄົນພວກນັ້ນຕໍາໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີ ໒ ອົງຈຶ່ງໃຊ້ ຜ້າຜືນດຽວເປັນທັງຜ້າປູນອນ ແລະຜ້າຫົ່ມ ນອນຮ່ວມກັນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນໍາເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີ ໒ ອົງໃຊ້ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມນອນຮ່ວມກັນ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີ ໒ ອົງຈຶ່ງໃຊ້ຜ້າຜືນດຽວເປັນທັງຜ້າປູນອນ ແລະ ຜ້າຫົ່ມນອນຮ່ວມກັນນໍ ພິກຂຸທັງຫຼາຍ ການກະທໍາແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໑໘໗] ກໍພິກຂຸນີເຫຼົ່າໃດ ໒ ອົງໃຊ້ຜ້າຜືນດຽວເປັນທັງຜ້າປູນອນ ແລະ ຜ້າຫົ່ມ ນອນຮ່ວມກັນ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີນອນຮ່ວມກັນ ໒ ອົງ ຈົບ**

## ສິກຂາບົດວິພັງ

[໙໓໗] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງເຫຼົ່ານາຕຸຄາມທີ່ອຸປະສົມບົດແລ້ວ

ຄຳວ່າ ໔ ອົງໃຊ້ຜ້າຜືນດຽວເປັນທັງຜ້າປູນອນ ແລະ ຜ້າຫົ່ມນອນຮ່ວມກັນ ຄື ທັງ ໔ ອົງປູຜ້າຜືນນັ້ນແລ້ວຫົ່ມຜ້າຜືນນັ້ນ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໙໓໙] ຜ້າຜືນດຽວເປັນທັງຜ້າປູນອນ ແລະຜ້າຫົ່ມ ພິກຂຸນີສຳຄັນວ່າຜ້າຜືນດຽວເປັນທັງຜ້າປູນອນ ແລະ ຜ້າຫົ່ມ ນອນ ຕ້ອງອາບັດປາຈິດຕີ

ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ພິກຂຸນີບໍ່ແນ່ໃຈ ນອນ ຕ້ອງອາບັດທຸກກົດ

ຜ້າຜືນດຽວເປັນທັງຜ້າປູນອນ ແລະ ຜ້າຫົ່ມ ພິກຂຸນີສຳຄັນວ່າຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ນອນ ຕ້ອງອາບັດປາຈິດຕີ

## ທຸກກົດ

ຜ້າປູນອນຜືນໜຶ່ງ ຜ້າຫົ່ມນອນຕ່າງຜືນ ຕ້ອງອາບັດທຸກກົດ

ຜ້າປູນອນຕ່າງຜືນ ຜ້າຫົ່ມນອນຜືນດຽວກັນ ຕ້ອງອາບັດທຸກກົດ

ຜ້າປູນອນ ແລະ ຜ້າຫົ່ມນອນຕ່າງຜືນກັນ ພິກຂຸນີສຳຄັນວ່າຜ້າຜືນດຽວເປັນທັງຜ້າປູນອນ ແລະ ຜ້າຫົ່ມ ຕ້ອງອາບັດທຸກກົດ

ຜ້າປູນອນ ແລະ ຜ້າຫົ່ມນອນຕ່າງຜືນກັນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ຜ້າປູນອນ ແລະ ຜ້າຫົ່ມນອນຕ່າງຜືນກັນ ພິກຂຸນີສຳຄັນວ່າຜ້າຜືນດຽວເປັນທັງຜ້າປູນອນ ແລະ ຜ້າຫົ່ມ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໔໐] ໑. ພິກຂຸນີ ສະແດງເຄື່ອງກຳນົດແລ້ວນອນ

໔. ພິກຂຸນີ ວິກົນຈະລິດ

໓. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

# ໔. ຕຸວັດຕະວັກ

## ສິກຂາບົດທີ ໑

### ວ່າດ້ວຍການຈົງໃຈກໍ່ຄວາມລຳຄານ

### ເລື່ອງພິກຂຸນີຖຸນລະນັນທາ

[໘໔໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາເປັນພະຫູສູດ ເປັນນັກເວົ້າ ແກ່ກ້າ ສາມາດກ່າວທຳມີກະຖາໄດ້ ແມ່ນພຣະພັດທະກາປິລານີກໍເປັນພະຫູສູດ ເປັນນັກເວົ້າ ແກ່ກ້າ ສາມາດກ່າວທຳມີກະຖາໄດ້ ທັງທ່ານກໍໄດ້ຮັບສັນເສີນວ່າມີຄຸນສົມບັດຍິ່ງກວ່າ

ຄົນທັງຫຼາຍຮູ້ວ່າ "ແມ່ເຈົ້າພັດທະກາປິລານີເປັນພະຫູສູດ ເປັນນັກເວົ້າ ແກ່ກ້າ ສາມາດກ່າວທຳມີກະຖາ ທັງໄດ້ຮັບສັນເສີນວ່າມີຄຸນສົມບັດຍິ່ງກວ່າ" ຈຶ່ງເຂົ້າໄປຫາພຣະພັດທະກາປິລານີກ່ອນແລ້ວໄປຫາພິກຂຸນີຖຸນລະນັນທາພາຍຫຼັງ

ພິກຂຸນີຖຸນລະນັນທາຖືກຄວາມຣິດສະຫຍາຄອບງຳ ຄິດວ່າ "ໄດ້ຂ່າວວ່າ ທຳມະດາພິກຂຸນີ ຜູ້ສາລະວົນຢູ່ກັບການອະພິປາຍເລື້ອງຕ່າງໆໃຫ້ຜູ້ອື່ນເຂົ້າໃຈ ຍ່ອມມັກໜ້ອຍ ສັນໂດດ ມັກສະຫງັດ ບໍ່ຄຸກຄີ" ຈຶ່ງຈົງກົມແດ່ ຢືນແດ່ ນັ່ງແດ່ ນອນແດ່ ຍົກຂຶ້ນສະແດງເອງແດ່ ໃຊ້ຜູ້ອື່ນໃຫ້ຍົກຂຶ້ນສະແດງແດ່ ທ່ອງຈົ່ມແດ່ ຕໍ່ໜ້າພຣະພັດທະກາປິລານີ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາ ຈຶ່ງຈົງໃຈກໍ່ຄວາມບໍ່ຜາສຸກແກ່ແມ່ເຈົ້າພັດທະກາປິລານີບໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາຈົງໃຈກໍ່ຄວາມບໍ່ຜາສຸກແກ່ພັດທະກາປິລານີ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາ ຈຶ່ງຈົງໃຈກໍ່

ຄວາມບໍ່ຜາສຸກແກ່ພັດທະກາປິລານີບໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໙໔໘] ກໍພິກຂຸນີໃດຈົງໃຈກໍ່ຄວາມບໍ່ຜາສຸກແກ່ພິກຂຸນີ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຖຸນລະນັນທາ ຈົບ**

## ສິກຂາບົດວິພັງ

[໙໔໙] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ແກ່ພິກຂຸນີ ຄື ແກ່ພິກຂຸນີອົງອື່ນ

ຄຳວ່າ ຈົງໃຈ ຄື ຮູ້ຢູ່ ຮູ້ດີຢູ່ ຈົງໃຈ ຝ່າຝືນ ລ່ວງລະເມີດ

ຄຳວ່າ ກໍ່ຄວາມບໍ່ຜາສຸກ ຄື ພິກຂຸນີຜູ້ກໍ່ຄວາມບໍ່ຜາສຸກນັ້ນຄິດວ່າ "ວິທີນີ້ຈະເຮັດໃຫ້ພິກຂຸນີນີ້ບໍ່ຜາສຸກ" ບໍ່ຂໍໂອກາດ ຈົງກົມແດ່ ຢືນແດ່ ນັ່ງແດ່ ນອນແດ່ ຍົກຂຶ້ນສະແດງເອງແດ່ ໃຊ້ຜູ້ອື່ນໃຫ້ຍົກຂຶ້ນສະແດງແດ່ ທ່ອງຈົ່ມແດ່ ຢູ່ຂ້າງໜ້າ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໙໕໐] ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ຈົງໃຈກໍ່ຄວາມບໍ່ຜາສຸກ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸນີບໍ່ແນ່ໃຈ ຈົງໃຈກໍ່ຄວາມບໍ່ຜາສຸກ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ຈົງໃຈກໍ່ຄວາມບໍ່ຜາສຸກ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸນີຈົງໃຈກໍ່ຄວາມບໍ່ຜາສຸກແກ່ອະນຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໗໘໕] ໑. ພິກຂຸນີບໍ່ປະສົງກໍ່ຄວາມບໍ່ຜາສຸກ ຂໍໂອກາດ ຈົງກົມ ຢືນ ນັ່ງ ນອນ ຍົກຂຶ້ນສະແດງເອງ ໃຊ້ຜູ້ອື່ນໃຫ້ຍົກຂຶ້ນສະແດງ ຫຼື ທ່ອງຈົ່ມຂ້າງໜ້າ

໘. ພິກຂຸນີວິກົນຈະລິດ
໙. ພິກຂຸນີຕົ້ນບັນຍັດ

**ສິກຂາບົດທີ ໓ ຈົບ**

# ໔. ຕຸວັດຕະວັກ

## ສິກຂາບົດທີ ໔

## ວ່າດ້ວຍການບໍ່ໃສ່ໃຈເບິ່ງແຍງເພື່ອນພິກຂຸນີ

## ເລື້ອງພິກຂຸນີຖຸນລະນັນທາ

[໗໘໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາບໍ່ເບິ່ງແຍງຊ່ອຍເຫຼືອ ສະຫະຊີວີນີຜູ້ໄດ້ຮັບຄວາມລຳບາກ ທັງບໍ່ໃສ່ໃຈມອບໝາຍໃຫ້ຜູ້ອື່ນເບິ່ງແຍງຊ່ອຍເຫຼືອ

ບັນດາພິກຂຸນີຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາ ຈຶ່ງບໍ່ເບິ່ງແຍງຊ່ອຍເຫຼືອສະຫະຊີວີນີຜູ້ໄດ້ຮັບຄວາມລຳບາກ ທັງບໍ່ໃສ່ໃຈມອບໝາຍ ໃຫ້ຜູ້ອື່ນເບິ່ງແຍງຊ່ອຍເຫຼືອນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາບໍ່ເບິ່ງແຍງຊ່ອຍ

ເຫຼືອສະຫະຊີວິນີຜູ້ເດືອດຮ້ອນ ທັງບໍ່ໃສ່ໃຈມອບໝາຍໃຫ້ຜູ້ອື່ນເບິ່ງແຍງຊ່ວຍເຫຼືອ ແມ່ນບໍ?" ພິກຂຸ ທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາຈຶ່ງບໍ່ເບິ່ງແຍງຊ່ວຍເຫຼືອສະຫະຊີວິນີຜູ້ໄດ້ຮັບຄວາມລຳບາກ ທັງບໍ່ໃສ່ໃຈມອບໝາຍໃຫ້ຜູ້ອື່ນເບິ່ງແຍງຊ່ວຍເຫຼືອນໍ ພິກຂຸທັງຫຼາຍ ການກະທຳແບບນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໙໔໗] ກໍພິກຂຸນີໃດ ບໍ່ເບິ່ງແຍງຊ່ວຍເຫຼືອ ຫຼື ບໍ່ໃສ່ໃຈມອບໝາຍໃຫ້ຜູ້ອື່ນເບິ່ງແຍງຊ່ວຍເຫຼືອສະຫະຊີວິນີຜູ້ໄດ້ຮັບຄວາມລຳບາກ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໙໔໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຜູ້ໄດ້ຮັບຄວາມລຳບາກ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຜູ້ເປັນໄຂ້

ທີ່ຊື່ວ່າ ສະຫະຊີວິນີ ຕັດໝາຍເຖິງສັດທິວິຫາຣິນີ

ຄຳວ່າ ບໍ່ເບິ່ງແຍງຊ່ວຍເຫຼືອ ຄື ບໍ່ເບິ່ງແຍງຊ່ວຍເຫຼືອດ້ວຍຕົນເອງ

ຄຳວ່າ ບໍ່ໃສ່ໃຈມອບໝາຍໃຫ້ຜູ້ອື່ນເບິ່ງແຍງຊ່ວຍເຫຼືອ ຄື ບໍ່ສັ່ງຜູ້ອື່ນ

ພິກຂຸນີຖືເບົາວ່າ "ຈະບໍ່ເບິ່ງແຍງຊ່ວຍເຫຼືອ ຈະບໍ່ໃສ່ໃຈມອບໝາຍໃຫ້ຜູ້ອື່ນເບິ່ງແຍງຊ່ວຍເຫຼືອ" ຕ້ອງອາບັດປາຈິດຕີ

ພິກຂຸນີບໍ່ເບິ່ງແຍງຊ່ວຍເຫຼືອ ບໍ່ໃສ່ໃຈມອບໝາຍໃຫ້ຜູ້ອື່ນເບິ່ງແຍງຊ່ວຍເຫຼືອອັນເຕວາສີນີ ຫຼື ອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໔໙] ໑. ພິກຂຸນີ ຜູ້ຖືເບົາເມື່ອມີອັນຕະລາຍ

໒. ພິກຂຸນີ ຫາຜູ້ຊ່ວຍບໍ່ໄດ້

໓. ພິກຂຸນີ ຜູ້ເປັນໄຂ້
໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໕. ພິກຂຸນີ ວິກົນຈະລິດ
໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

# ໔. ຕຸວັດຕະວັກ

## ສິກຂາບົດທີ ໕

### ວ່າດ້ວຍການລາກອອກ

### ເລື້ອງພິກຂຸນີຖຸນລະນັນທາ

[໙໕໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະພັດທະກາປິລານີຈຳພັນສາທີ່ເມືອງສາເກດ ທ່ານສົ່ງທູດໄປສຳນັກຂອງພິກຂຸນີຖຸນລະນັນທາດ້ວຍວຽກງານບາງຢ່າງ ໃຫ້ແຈ້ງວ່າ "ຖ້າແມ່ເຈົ້າຖຸນລະນັນທາໃຫ້ທີ່ພັກ ເຮົາຈະມາເມືອງສາວັດຖີ"

ພິກຂຸນີຖຸນລະນັນທາກ່າວວ່າ "ເຊີນມາເທີ້ນ ຂ້ານ້ອຍຈະໃຫ້"

ລຳດັບນັ້ນ ພຣະພັດທະກາປິລານີເດີນທາງຈາກເມືອງສາເກດໄປເຖິງນະຄອນສາວັດຖີ ພິກຂຸນີ ຖຸນລະນັນທາໄດ້ໃຫ້ທີ່ພັກແກ່ພຣະພັດທະກາປິລານີ

ສະໄໝນັ້ນ ພິກຂຸນີຖຸນລະນັນທາເປັນພະຫູສູດ ເປັນນັກເວົ້າ ແກ່ກ້າ ສາມາດກ່າວທຳມີກະຖາ ແມ່ນພຣະພັດທະກາປິລານີກໍເປັນພະຫູສູດ ເປັນນັກເວົ້າ ແກ່ກ້າ ສາມາດ ກ່າວທຳມີກະຖາທັງທ່ານກໍໄດ້ຮັບສັນເສີນວ່າ ມີຄຸນສົມບັດຍິ່ງກວ່າ

ຄົນທັງຫຼາຍເຫັນວ່າ ພິກຂຸນີພັດທະກາປິລານີເປັນພະຫູສູດ ເປັນນັກເວົ້າ ແກ່ກ້າ ສາມາດກ່າວທຳມີກະຖາ ທັງທ່ານກໍໄດ້ຮັບສັນເສີນວ່າມີຄຸນສົມບັດຍິ່ງກວ່າ ຈຶ່ງເຂົ້າໄປຫາພຣະເຖຣີກ່ອນແລ້ວໄປຫາພິກຂຸນີຖຸນລະນັນທາພາຍຫຼັງ ພິກຂຸນີຖຸນລະນັນທາຮູ້ວ່າ "ທຳມະດາພິກຂຸນີຜູ້ສາລະວົນຢູ່ກັບການອະພິປາຍເລື້ອງຕ່າງໆໃຫ້ຜູ້ອື່ນເຂົ້າໃຈ ຍ່ອມມັກໜ້ອຍ ສັນໂດດ ມັກສະຫງັດ ບໍ່ຄຸກຄີ" ຈຶ່ງໂກດ ຂັດໃຈ ລາກພຣະພັດທະກາປິລານີອອກຈາກຫ້ອງ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່

ເຈົ້າຖຸນລະນັນທາໃຫ້ທີ່ພັກແກ່ແມ່ເຈົ້າພັດທະກາປິລານີແລ້ວໂກດ ຂັດໃຈ ລາກອອກໄປນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາໃຫ້ທີ່ພັກແກ່ພັດທະກາປິລານີແລ້ວໂກດ ບໍ່ພໍໃຈ ລາກອອກໄປ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາໃຫ້ທີ່ພັກແກ່ພັດທະກາປິລານີແລ້ວໂກດ ບໍ່ພໍໃຈ ລາກອອກໄປນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກ ສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໕໑] ກໍພິກຂຸນີໃດໃຫ້ທີ່ພັກແກ່ພິກຂຸນີແລ້ວ ໂກດ ບໍ່ພໍໃຈ ລາກອອກໄປ ຫຼື ໃຊ້ໃຫ້ລາກອອກໄປ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໗໕໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ແກ່ພິກຂຸນີ ຄື ພິກຂຸນີອົງອື່ນ

ທີ່ຊື່ວ່າ ທີ່ພັກ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງທີ່ພັກທີ່ມີປະຕູ

ຄຳວ່າ ໃຫ້ ຄື ໃຫ້ດ້ວຍຕົນເອງ

ຄຳວ່າ ໂກດ ບໍ່ພໍໃຈ ຄື ບໍ່ພໍໃຈ ແຄ້ນໃຈ ເຈັບໃຈ

ຄຳວ່າ ລາກ ຄວາມວ່າ ຈັບໃນຫ້ອງແລ້ວລາກອອກມາໜ້າຫ້ອງ ຕ້ອງອາບັດປາຈິດຕີ ຈັບທີ່ໜ້າຫ້ອງແລ້ວລາກອອກຂ້າງນອກ ຕ້ອງອາບັດປາຈິດຕີ ພິກຂຸນີລາກພົ້ນປະຕູຫຼາຍປະຕູດ້ວຍຄວາມພະຍາຍາມຄັ້ງດຽວ ຕ້ອງອາບັດປາຈິດຕີ

ຄຳວ່າ ໃຊ້ໃຫ້ລາກ ຄື ພິກຂຸນີສັ່ງຜູ້ອື່ນ ຕ້ອງອາບັດປາຈິດຕີ ຜູ້ຮັບຄຳສັ່ງຄັ້ງດຽວແຕ່ດຶງອອກໄປພົ້ນຫຼາຍປະຕູ ພິກຂຸນີຜູ້ສັ່ງ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໘໕໓] ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ໃຫ້ທີ່ພັກແລ້ວໂກດ ບໍ່ພໍໃຈ ລາກ ຫຼື ໃຊ້ໃຫ້ລາກ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸນີບໍ່ແນ່ໃຈ ໃຫ້ທີ່ພັກແລ້ວໂກດ ບໍ່ພໍໃຈ ລາກ ຫຼື ໃຊ້ໃຫ້ລາກ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ໃຫ້ທີ່ພັກແລ້ວໂກດ ບໍ່ພໍໃຈ ລາກ ຫຼື ໃຊ້ໃຫ້ລາກ ຕ້ອງອາບັດປາຈິດຕີ

## ທຸກກົດ

ຂົນ ຫຼື ໃຊ້ຜູ້ອື່ນໃຫ້ຂົນບໍຣິຂານຂອງທ່ານ ຕ້ອງອາບັດທຸກກົດ

ລາກ ຫຼື ໃຊ້ຜູ້ອື່ນໃຫ້ລາກຈາກສະຖານທີ່ບໍ່ມີປະຕູ ຕ້ອງອາບັດທຸກກົດ

ຂົນ ຫຼື ໃຊ້ຜູ້ອື່ນໃຫ້ຂົນບໍຣິຂານຂອງທ່ານ ຕ້ອງອາບັດທຸກກົດ

ລາກ ຫຼື ໃຊ້ຜູ້ອື່ນໃຫ້ລາກອະນຸປະສຳບັນ ຈາກທີ່ມີປະຕູ ຫຼື ບໍ່ມີປະຕູ ຕ້ອງອາບັດທຸກກົດ

ຂົນ ຫຼື ໃຊ້ຜູ້ອື່ນໃຫ້ຂົນບໍຣິຂານຂອງທ່ານ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໘໕໔] ໑. ພິກຂຸນີ ລາກ ຫຼື ໃຊ້ຜູ້ອື່ນໃຫ້ລາກພິກຂຸນີບໍ່ມີຄວາມລະອາຍ

໒. ພິກຂຸນີ ຂົນ ຫຼື ໃຊ້ຜູ້ອື່ນໃຫ້ຂົນບໍຣິຂານຂອງພິກຂຸນີບໍ່ມີຄວາມລະອາຍນັ້ນ

໓. ພິກຂຸນີ ລາກ ຫຼື ໃຊ້ຜູ້ອື່ນໃຫ້ລາກພິກຂຸນີວິກົນຈະລິດ

໔. ພິກຂຸນີ ຂົນ ຫຼື ໃຊ້ຜູ້ອື່ນຂົນບໍຣິຂານຂອງພິກຂຸນີວິກົນຈະລິດນັ້ນ
໕. ພິກຂຸນີ ລາກ ຫຼື ໃຊ້ຜູ້ອື່ນໃຫ້ລາກພິກຂຸນີຜູ້ກໍ່ຄວາມໝາງໃຈ ຯລຯ ກໍ່ການຜິດຖຽງ ຯລຯ ກໍ່ການວິວາດ ຯລຯ ກໍ່ຄວາມອື້ສາວ ຯລຯ ກໍ່ອະທິກອນໃນສົງ
໖. ພິກຂຸນີ ຂົນ ຫຼື ໃຊ້ຜູ້ອື່ນໃຫ້ຂົນບໍຣິຂານຂອງພິກຂຸນີຜູ້ກໍ່ຄວາມໝາງໃຈ ຯລຯ ກໍ່ການຜິດຖຽງ ຯລຯ ກໍ່ການວິວາດ ຯລຯ ກໍ່ຄວາມອື້ສາວ ຯລຯ ກໍ່ອະທິກອນໃນສົງນັ້ນ
໗. ພິກຂຸນີ ລາກ ຫຼື ໃຊ້ຜູ້ອື່ນໃຫ້ລາກອັນເຕວາສິນີຫຼືສັດທິວິຫາຣິນີຜູ້ປະພຶດບໍ່ຖືກ
໘. ພິກຂຸນີ ຂົນ ຫຼື ໃຊ້ຜູ້ອື່ນໃຫ້ຂົນບໍຣິຂານຂອງພິກຂຸນີອັນເຕວາສິນີ ຫຼື ສັດທິວິຫາຣິນີຜູ້ປະພຶດບໍ່ຖືກນັ້ນ
໙. ພິກຂຸນີ ວິກົນຈະລິດ
໑໐. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໕ ຈົບ**

# ໔. ຕຸວັດຕະວັກ

## ສິກຂາບົດທີ ໖

### ວ່າດ້ວຍການຢູ່ຄຸກຄີກັບຄະລຶຫັດ

### ເລື້ອງພິກຂຸນີຈັນທະກາລີ

[໙໕໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຈັນທະກາລີຢູ່ຄຸກຄີກັບຄະຫະບໍດີແດ່ ບຸດຄະຫະບໍດີແດ່ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຈັນທະກາລີຈຶ່ງຢູ່ຄຸກຄີກັບຄະຫະບໍດີແດ່ ບຸດຄະຫະບໍດີແດ່ນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຣັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຈັນທະກາລີຢູ່ຄຸກຄີກັບ ຄະຫະບໍ

ດີແດ່ ບຸດຄະຫະບໍດີແດ່ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈັນທະກາລີຈຶ່ງຢູ່ຄຸກຄີກັບຄະຫະບໍດີແດ່ ບຸດຄະຫະບໍດີແດ່ນໍ ພິກຂຸທັງຫຼາຍ ການກະທໍາແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໙໕໖] ກໍພິກຂຸນີໃດ ຢູ່ຄຸກຄີກັບຄະຫະບໍດີ ຫຼື ກັບບຸດຄະຫະບໍດີ ພິກຂຸນີນັ້ນອັນພິກຂຸນີທັງຫຼາຍເພິ່ງວ່າກ່າວຕັກເຕືອນແນວນີ້ວ່າ ນາງ ທ່ານຢ່າຢູ່ຄຸກຄີກັບຄະຫະບໍດີ ຫຼື ກັບບຸດຄະຫະບໍດີ ນາງຈົ່ງແຍກກັນຢູ່ເທີ້ນ ສົງຍ່ອມສັນເສີນການ ແຍກກັນຢູ່ຂອງນາງ ກໍພິກຂຸນີນັ້ນອັນພິກຂຸນີທັງຫຼາຍວ່າກ່າວຕັກເຕືອນແນວນີ້ ຍັງຢືນຢັນຢູ່ຢ່າງນັ້ນ ພິກຂຸນີນັ້ນອັນພິກຂຸນີທັງຫຼາຍເພິ່ງສູດສະມະນຸພາດຈົນຄົບ ໓ ຄັ້ງເພື່ອໃຫ້ສະລະເລື້ອງນັ້ນ ຖ້າທ່ານກໍາລັງຖືກສູດສະມະນຸພາດກວ່າຈະຄົບ ໓ ຄັ້ງ ສະລະເລື້ອງນັ້ນໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຈັນທະກາລີ ຈົບ

## ສິກຂາບົດວິພັງ

[໙໕໗] ຄໍາວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄໍາວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຄຸກຄີ ຄື ຄຸກຄີກັນທາງກາຍ ແລະ ວາຈາທີ່ບໍ່ສົມຄວນ

ທີ່ຊື່ວ່າ ຄະຫະບໍດີ ໄດ້ແກ່ ບຸຣຸດຜູ້ຄອງເຮືອນຄົນໃດຄົນໜຶ່ງ

ທີ່ຊື່ວ່າ ບຸດຄະຫະບໍດີ ໄດ້ແກ່ ບຸດ ແລະ ອ້າຍນ້ອງຊາຍຄົນໃດຄົນໜຶ່ງ

ຄໍາວ່າ ພິກຂຸນີນັ້ນ ໄດ້ແກ່ ພິກຂຸນີຜູ້ຢູ່ຄຸກຄີຄົນໃດຄົນໜຶ່ງ

ຄໍາວ່າ ອັນພິກຂຸນີທັງຫຼາຍ ໄດ້ແກ່ ພິກຂຸນີພວກອື່ນ

ພິກຂຸນີຜູ້ໄດ້ເຫັນໄດ້ຮູ້ເພິ່ງວ່າກ່າວຕັກເຕືອນພິກຂຸນີຜູ້ຄຸກຄີວ່າ "ນາງ ທ່ານຢ່າຢູ່ຄຸກຄີກັບຄະຫະບໍດີ ຫຼື ກັບບຸດຄະຫະບໍດີ ນາງຈົ່ງແຍກກັນຢູ່ເທີ້ນ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງເທົ່ານັ້ນ" ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໒ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ພິກຂຸນີຜູ້ຮູ້ເລື້ອງແລ້ວບໍ່ວ່າ

ກ່າວຕັກເຕືອນ ຕ້ອງອາບັດທຸກກົດ ພິກຂຸນີນັ້ນອັນພິກຂຸນີທັງຫຼາຍເພິ່ງນຳຕົວມາສູ່ທ່າມກາງສົງ ວ່າກ່າວຕັກເຕືອນວ່າ"ນາງ ທ່ານຢ່າຢູ່ຄຸກຄີກັບຄະຫະບໍດີ ຫຼື ກັບບຸດຄະຫະບໍດີ ນາງຈົ່ງແຍກກັນຢູ່ ສົງຍ່ອມສັນເສີນການແຍກກັນຢູ່ຂອງນາງເທົ່ານັ້ນ" ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໒ ເພິ່ງວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າບໍ່ສະລະ ຕ້ອງອາບັດທຸກກົດ ສົງເພິ່ງສູດສະມະນຸພາດພິກຂຸນີນັ້ນ

## ວິທີສູດສະມະນຸພາດ ແລະ ກຳມະວາຈາສູດສະມະນຸພາດ

ພິກຂຸທັງຫຼາຍ ສົງເພິ່ງສູດສະມະນຸພາດແນວນີ້ ຄື ພິກຂຸນີຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາ ວ່າ

[໗໔໘] ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸນີຊື່ນີ້ຢູ່ຄຸກຄີກັບຄະຫະບໍດີແດ່ ກັບບຸດຄະຫະບໍດີແດ່ ທ່ານຍັງບໍ່ສະລະເລື້ອງນັ້ນ ຖ້າສົງພ້ອມກັນແລ້ວເພິ່ງສູດສະມະນຸພາດ ພິກຂຸນີຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸນີຊື່ນີ້ຢູ່ຄຸກຄີກັບຄະຫະບໍດີແດ່ ກັບບຸດຄະຫະບໍດີແດ່ ທ່ານຍັງບໍ່ສະລະເລື້ອງນັ້ນ ສົງສູດສະມະນຸພາດພິກຂຸນີຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ແມ່ເຈົ້າອົງໃດເຫັນດ້ວຍກັບການສູດສະມະນຸພາດພິກຂຸນີຊື່ນີ້ເພື່ອໃຫ້ສະລະເລື້ອງນັ້ນ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງໂຈດ

ຂ້າພະເຈົ້າກ່າວຄວາມນີ້ແມ່ນຄັ້ງທີ ໒ ฯລฯ
ຂ້າພະເຈົ້າກ່າວຄວາມນີ້ແມ່ນຄັ້ງທີ ໓ ฯລฯ

ພິກຂຸນີຊື່ນີ້ສົງສູດສະມະນຸພາດແລ້ວເພື່ອໃຫ້ສະລະເລື້ອງນັ້ນ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດທຸກກົດ ໒ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ຕ້ອງອາບັດປາຈິດຕິ

## ບົດພາຊະນີ

## ຕິກະປາຈິດຕິ

[໗໔໙] ກຳທີ່ເຮັດຖືກຕ້ອງ[1] ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບໍ່ສະລະ ຕ້ອງອາບັດປາຈິດຕິ

ກຳທີ່ເຮັດຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບໍ່ສະລະ ຕ້ອງອາບັດປາຈິດຕີ
ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ບໍ່ຖືກຕ້ອງ ບໍ່ສະລະ ຕ້ອງອາບັດປາຈິດຕີ

### ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໖໐] ໑. ພິກຂຸນີ ຍັງບໍ່ຖືກສົງສູດສະມະນຸພາດ
໒. ພິກຂຸນີ ຍອມສະລະ
໓. ພິກຂຸນີ ວິກົນຈະລິດ
໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໖ ຈົບ**

# ໔. ຕຸວັດຕະວັກ

## ສິກຂາບົດທີ ໗

## ວ່າດ້ວຍການທ່ຽວຈາຣິກໄປໃນທີ່ທີ່ໜ້າຫວາດຣະແວງພາຍໃນຣັດ ເລື້ອງພິກຂຸນີຫຼາຍອົງ

[໙໖໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າໜ້າຫວາດຣະແວງ ມີໄພເປັນຕາຢ້ານພາຍໃນຣັດ ພວກນັກເລງ ຂົ່ມຂືນ (ພິກຂຸນີເຫຼົ່ານັ້ນ)

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າໜ້າຫວາດຣະແວງ ມີໄພເປັນຕາ

ຢ້ານພາຍໃນຮັດນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າໜ້າຫວາດຣະແວງ ມີໄພເປັນຕາຢ້ານພາຍໃນຮັດ ແມ່ນບໍ?" ພິກຂຸທັງ ຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີຈຶ່ງທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນ ໃນທີ່ທີ່ຮູ້ກັນວ່າໜ້າຫວາດຣະແວງ ມີໄພເປັນຕາຢ້ານພາຍໃນຮັດນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສ ຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໘] ກໍພິກຂຸນີໃດ ທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າ ໜ້າຫວາດຣະແວງ ມີໄພເປັນຕາຢ້ານພາຍໃນຮັດ ຕ້ອງອາບັດປາຈິດຕິ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໗໙] ຄຳວ່າ ກໍ ฯລฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ฯລฯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ພາຍໃນຮັດ ຄື ໃນຮັດທີ່ຕົນອາໄສຢູ່

ທີ່ຊື່ວ່າ ໜ້າຫວາດຣະແວງ ຄື ໃນຫົນທາງນັ້ນ ຜາກົດທີ່ຢູ່ ຜາກົດທີ່ກິນ ຜາກົດ ທີ່ຢືນ ຜາກົດທີ່ນັ່ງ ຜາກົດທີ່ນອນຂອງພວກໂຈນ

ທີ່ຊື່ວ່າ ມີໄພເປັນຕາຢ້ານ ຄື ໃນຫົນທາງນັ້ນ ຜາກົດມີມະນຸດຖືກພວກໂຈນຂ້າ ຜາກົດມີມະນຸດຖືກປຸ້ນ ຜາກົດມີມະນຸດຖືກທຸບຕີ

ທີ່ຊື່ວ່າ ບໍ່ມີກອງກວຽນເປັນເພື່ອນ ຄື ເວັ້ນກອງກວຽນ

ຄຳວ່າ ທ່ຽວຈາຣິກໄປ ຄື ທ່ຽວຈາຣິກໄປໃນໝູ່ບ້ານມີກຳນົດໄລຍະຊົ່ວໄກ່ບິນຕົກ ຕ້ອງອາບັດປາຈິດຕິທຸກ ໆ ບໍລິເວນໝູ່ບ້ານ ທ່ຽວຈາຣິກໄປໃນປ່າບໍ່ມີໝູ່ບ້ານ ຕ້ອງອາບັດປາຈິດຕິທຸກ ໆ ເຄິ່ງໂຍດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໖໔] ໑. ພິກຂຸນີ ໄປກັບກອງກວຽນ
໒. ພິກຂຸນີ ໄປໃນສະຖານທີ່ປອດໄພ
໓. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໔. ພິກຂຸນີ ວິກົນຈະລິດ
໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ໔. ຕຸວັດຕະວັກ

## ສິກຂາບົດທີ ໗

## ວ່າດ້ວຍການທ່ຽວຈາຣິກໄປໃນທີ່ທີ່ໜ້າຫວາດຣະແວງພາຍນອກຣັດ ເລື້ອງພິກຂຸນີຫຼາຍອົງ

[໙໖໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າໜ້າຫວາດຣະແວງ ມີໄພເປັນຕາຢ້ານພາຍນອກຣັດ ພວກນັກເລງຂົ່ມຂືນ (ພິກຂຸນີເຫຼົ່ານັ້ນ)

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າໜ້າຫວາດຣະແວງ ມີໄພເປັນຕາຢ້ານພາຍນອກຣັດນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າໜ້າຫວາດຣະແວງ ມີໄພເປັນຕາຢ້ານພາຍນອກຣັດ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯลฯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີຈຶ່ງທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າໜ້າຫວາດຣະແວງ ມີໄພເປັນຕາຢ້ານພາຍນອກຣັດນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສ ຍິ່ງຂຶ້ນໄດ້ເລີຍ ฯลฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໙໓] ກໍພິກຂຸນີໃດ ທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າ ໜ້າຫວາດຣະແວງ ມີໄພເປັນຕາຢ້ານພາຍນອກຣັດ ຕ້ອງອາບັດປາຈິດຕິ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໙໔] ຄຳວ່າ ກໍ ฯลฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯลฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ฯลฯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ฯลฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ພາຍນອກຣັດ ຄື ໃນຣັດຂອງຝ່າຍອື່ນນອກຈາກຣັດທີ່ຕົນອາໄສຢູ່

ທີ່ຊື່ວ່າ ໜ້າຫວາດຣະແວງ ຄື ໃນຫົນທາງນັ້ນ ຜາກົດທີ່ຢູ່ ຜາກົດທີ່ກິນ ຜາກົດ ທີ່ຢືນ ຜາກົດທີ່ນັ່ງ ຜາກົດທີ່ນອນຂອງພວກໂຈນ

ທີ່ຊື່ວ່າ ມີໄພເປັນຕາຢ້ານ ຄື ໃນຫົນທາງນັ້ນ ຜາກົດມີຄົນທັງຫຼາຍຖືກພວກໂຈນຂ້າ ຜາກົດມີຄົນຖືກປຸ້ນ ຜາກົດມີຄົນຖືກທຸບຕີ

ທີ່ຊື່ວ່າ ບໍ່ມີກອງກວຽນເປັນເພື່ອນ ຄື ເວັ້ນກອງກວຽນ

ຄຳວ່າ ທ່ຽວຈາຣິກໄປ ຄື ທ່ຽວຈາຣິກໄປໃນໝູ່ບ້ານມີກຳນົດໄລຍະຊົ່ວໄກ່ບິນຕົກ ຕ້ອງອາບັດປາຈິດຕິທຸກ ໆ ບໍລິເວນໝູ່ບ້ານ ທ່ຽວຈາຣິກໄປໃນປ່າບໍ່ມີໝູ່ບ້ານ ຕ້ອງອາບັດປາຈິດຕິທຸກ ໆ ເຄິ່ງໂຍດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໙໗] ໑. ພິກຂຸນີ ໄປກັບກອງກວຽນ

໒. ພິກຂຸນີ ໄປໃນສະຖານທີ່ປອດໄພ ບໍ່ມີໄພເປັນຕາຢ້ານ

໓. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ໔. ຕຸວັດຕະວັກ

## ສິກຂາບົດທີ ໘

### ວ່າດ້ວຍການທ່ຽວຈາຣິກໄປພາຍໃນພັນສາ

### ເລື້ອງພິກຂຸນີຫຼາຍອົງ

[໑໙໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄື ຄັ້ງນັ້ນ ພວກພິກຂຸນີພາກັນທ່ຽວຈາຣິກໄປພາຍໃນພັນສາຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງທ່ຽວໄປພາຍໃນພັນສາຢຽບຍ່ຳຂອງຂຽວແລະຫຍ້າ ບຽດບຽນຊີວິດເຊິ່ງມີອິນຊີດຽວ ທຳລາຍສັດໂຕນ້ອຍເປັນຈຳນວນຫຼາຍນໍ"

ພິກຂຸນີທັງຫຼາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງທ່ຽວຈາຣິກ ໄປພາຍໃນພັນສານໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍ ໃຫ້ຮູ້ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີທ່ຽວຈາຣິກໄປພາຍໃນພັນ

ສາ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີຈຶ່ງທ່ຽວໄປພາຍໃນພັນສານໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໙໗໐] ກໍ ພິກຂຸນີໃດ ທ່ຽວຈາຣິກໄປພາຍໃນພັນສາ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໙໗໑] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ພາຍໃນພັນສາ ຄື ບໍ່ຢູ່ຕະຫຼອດພັນສາຕົ້ນ ໓ ເດືອນ ຫຼື ຕະຫຼອດພັນສາ ຫຼັງ ໓ ເດືອນ

ຄຳວ່າ ທ່ຽວຈາຣິກໄປ ຄື ທ່ຽວຈາຣິກໄປໃນໝູ່ບ້ານມີກຳນົດໄລຍະຊົ່ວໄກ່ບິນຕົກ ຕ້ອງອາບັດປາຈິດຕີທຸກ ໆ ບໍລິເວນໝູ່ບ້ານ ທ່ຽວຈາຣິກໄປໃນປ່າບໍ່ມີໝູ່ບ້ານ ຕ້ອງອາບັດປາຈິດຕີທຸກ ໆ ເຄິ່ງໂຍດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໗໔] ໑. ພິກຂຸນີ ໄປດ້ວຍສັນຕາຫະກະຣະນີຍະ
໒. ພິກຂຸນີ ຖືກລົບກວນຈຶ່ງໄປ
໓. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໔. ພິກຂຸນີ ວິກົນຈະລິດ
໕. ພິກຂຸນີ ຕົ້ນບັນຍັດ

### ສິກຂາບົດທີ ໙ ຈົບ

# ໔. ຕຸວັດຕະວັກ

## ສິກຂາບົດທີ ໑໐
## ວ່າດ້ວຍການບໍ່ຫຼີກຈາຣິກໄປ
## ເລື້ອງພິກຂຸນີຫຼາຍອົງ

[໙໗໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ພວກພິກຂຸນີຢູ່ຈຳພັນສາໃນເມືອງຣາຊະຄຶນັ້ນຕະຫຼອດລະດູຝົນ ຢູ່ໃນເມືອງຣາຊະຄຶນັ້ນຕະຫຼອດລະດູໜາວ ຢູ່ໃນເມືອງຣາຊະຄຶນັ້ນຕະຫຼອດລະດູຮ້ອນ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ທິດທັງຫຼາຍ ຄົງຄັບແຄບມືດມົນສຳລັບພິກຂຸນີ ພິກຂຸນີເຫຼົ່ານີ້ຈຶ່ງແນມບໍ່ເຫັນທິດທາງ"

ພິກຂຸນີທັງຫຼາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ລຳດັບນັ້ນ ພິກຂຸນີເຫຼົ່ານັ້ນຈຶ່ງບອກເລື້ອງນີ້ໃຫ້ພິກຂຸທັງຫຼາຍຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ເຮົາຈະບັນຍັດສິກຂາບົດແກ່ພິກຂຸນີທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ

ຯລຯ

໙. ເພື່ອຄວາມຕັ້ງໝັ້ນແຫ່ງສັດທຳ

໑໐. ເພື່ອເອື້ອເຟື້ອວິໄນ

ພິກຂຸທັງຫຼາຍ ກໍພິກຂຸນີທັງຫຼາຍເພິ່ງຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໙໗໔] ກໍພິກຂຸນີໃດ ຈຳພັນສາແລ້ວ ບໍ່ຫຼີກຈາຣິກໄປ ໂດຍທີ່ສຸດແມ່ນສິ້ນໄລຍະທາງ ໕-໖ ໂຍດ ຕ້ອງອາບັດປາຈິດຕີ^

**ເລື້ອງພິກຂຸນີຫຼາຍອົງ ຈົບ**

## ສິກຂາບົດວິພັງ

[ໜ໗໕] ຄຳວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າກໍ ໆລໆ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຈຳພັນສາແລ້ວ ຄື ຢູ່ຈຳພັນສາຕົ້ນ ໓ ເດືອນ ຫຼື ຕະຫຼອດ

ພັນສາຫຼັງ ໓ ເດືອນ ພໍຖືເບົາວ່າ "ເຮົາຈະບໍ່ຫຼີກຈາຣິກໄປໂດຍທີ່ສຸດແມ່ນສິ້ນໄລຍະທາງ ໕-໖ ໂຍດ" ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[ໜ໗໖] ໑. ພິກຂຸນີ ບໍ່ຈາຣິກໄປເມື່ອມີອັນຕະລາຍ

໒. ພິກຂຸນີ ສະແຫວງຫາພິກຂຸນີຜູ້ເປັນເພື່ອນບໍ່ໄດ້

໓. ພິກຂຸນີ ເປັນໄຂ້

໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໕. ພິກຂຸນີ ວິກົນຈະລິດ

໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑໐ ຈົບ**

**ຕຸວັດຕະວັກທີ ໔ ຈົບ**

# ໕. ຈິດຕາຄາຣະວັກ

## ໝວດວ່າດ້ວຍຫໍຈິດຕະກຳ

## ສິກຂາບົດທີ ໑

## ວ່າດ້ວຍການໄປເບິ່ງໂຮງລະຄອນຫຼວງ

## ເລື້ອງພິກຂຸນີສັບພັກຄີ

[໙໗໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ທີ່ພຣະຣາດຊະອຸທະຍານຂອງພຣະເຈົ້າປະເສນທິໂກສົນ ມີການສະແດງຮູບຈິດຕະກຳໃນຫໍຈິດຕະກຳ ຄັ້ງນັ້ນ ຄົນທັງຫຼາຍພາກັນໄປເບິ່ງຫໍຈິດຕະກຳ ແມ່ນພວກພິກຂຸນີສັບພັກຄີກໍໄປເບິ່ງຫໍຈິດຕະກຳ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງໄປເບິ່ງຫໍຈິດຕະກຳເໝືອນແມ່ຍິງຄະລຶຫັດ ຜູ້ບໍຣິໂພກການນໍ"

ພິກຂຸນີທັງຫຼາຍ ໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງໄປເບິ່ງຫໍຈິດຕະກຳນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີໄປເບິ່ງຫໍຈິດຕະກຳ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງໄປເບິ່ງຫໍຈິດຕະກຳນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງ ໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໙໗໘] ກໍພິກຂຸນີໃດ ໄປເບິ່ງໂຮງລະຄອນຫຼວງ ຫໍຈິດຕະກຳ ສວນສາທາລະນະ ອຸທະຍານ ຫຼື ສະໂບກຂະຣະນີ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີສັບພັກຄີ ຈົບ**

## ສິກຂາບົດວິພັງ

[໕໗໙] ຄຳວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໆລໆ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງວ່າ ພິກຂຸນີໃນຄວາມໝາຍນີ້

ທີ່ຊື່ວ່າ ໂຮງລະຄອນຫຼວງ ໄດ້ແກ່ ສະຖານທີ່ທີ່ເຂົາສ້າງຂຶ້ນໄວ້ ໃນທີ່ໃດທີ່ໜຶ່ງເພື່ອຖວາຍພຣະຣາຊາຊົງກີລາ ເພື່ອໃຫ້ຊົງສຳຣານພຣະຫະໄທ

ທີ່ຊື່ວ່າ ຫໍຈິດຕະກຳ ໄດ້ແກ່ ຫໍທີ່ສ້າງຂຶ້ນ ໃນທີ່ໃດທີ່ໜຶ່ງເພື່ອໃຫ້ຄົນທັງຫຼາຍ ຊົມຫຼິ້ນມ່ວນຊື່ນ

ທີ່ຊື່ວ່າ ສວນສາທາລະນະ ໄດ້ແກ່ ສວນທີ່ສ້າງຂຶ້ນໃຫ້ຄົນທັງຫຼາຍຊົມຫຼິ້ນມ່ວນຊື່ນ

ທີ່ຊື່ວ່າ ອຸທະຍານ ໄດ້ແກ່ ອຸທະຍານທີ່ສ້າງຂຶ້ນ ໃນທີ່ໃດທີ່ໜຶ່ງເພື່ອໃຫ້ຄົນທັງຫຼາຍ ຊົມຫຼິ້ນມ່ວນຊື່ນ

ທີ່ຊື່ວ່າ ສະໂບກຂະຣະນີ ໄດ້ແກ່ ສະນ້ຳທີ່ຂຸດໄວ້ ໃນທີ່ໃດທີ່ໜຶ່ງເພື່ອໃຫ້ຄົນທັງຫຼາຍຊົມຫຼິ້ນມ່ວນຊື່ນ

[໕໘໐] ພິກຂຸນີຍ່າງໄປເພື່ອຈະເບິ່ງ ຕ້ອງອາບັດທຸກກົດ ຢືນເບິ່ງ ຕ້ອງອາບັດປາຈິດຕີ ພົ້ນສາຍຕາໄປແລ້ວຫຼຽວກັບມາເບິ່ງອີກ ຕ້ອງອາບັດປາຈິດຕີ ຍ່າງເພື່ອຈະໄປເບິ່ງແຕ່ລະແຫ່ງ ຕ້ອງອາບັດທຸກກົດ ຢືນເບິ່ງ ຕ້ອງອາບັດປາຈິດຕີ ພົ້ນສາຍຕາໄປແລ້ວຫຼຽວກັບມາເບິ່ງອີກ ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໕໘໑] ໑. ພິກຂຸນີ ຢືນຢູ່ທີ່ສວນສາທາລະນະແນມເຫັນ

໒. ພິກຂຸນີ ຍ່າງໄປຍ່າງມາແນມເຫັນ

໓. ພິກຂຸນີ ມີວຽກງານຍ່າງໄປເຫັນ

໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໕. ພິກຂຸນີ ວິກົນຈະລິດ

໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑ ຈົບ**

# ໕. ຈິດຕາຄາຣະວັກ

## ສິກຂາບົດທີ ໘

## ວ່າດ້ວຍການໃຊ້ຕັ່ງຫຼືແທ່ນ

## ເລື້ອງພິກຂຸນີຫຼາຍອົງ

[໙໗໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍໃຊ້ຕັ່ງຍາວແດ່ ແທ່ນແດ່ ຄົນທັງຫຼາຍທ່ຽວຈາຣິກໄປຕາມວິຫານເຫັນແລ້ວຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງໃຊ້ຕັ່ງຍາວແດ່ ແທ່ນແດ່ ເໝືອນແມ່ຍິງຄະລຶຫັດຜູ້ບໍຣິໂພກກາມນໍ"

ພິກຂຸນີທັງຫຼາຍ ໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງໃຊ້ຕັ່ງຍາວແດ່ ແທ່ນແດ່ນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີໃຊ້ຕັ່ງຍາວແດ່ ແທ່ນແດ່ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີຈຶ່ງໃຊ້ຕັ່ງຍາວແດ່ ແທ່ນແດ່ ນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໙໗໙] ກໍພິກຂຸນີໃດ ໃຊ້ຕັ່ງຍາວ ຫຼື ແທ່ນ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໙໗໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຕັ່ງຍາວ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຕັ່ງທີ່ເກີນຂະໜາດ

ທີ່ຊື່ວ່າ ແທ່ນ ໄດ້ແກ່ ແທ່ນທີ່ຖັກດ້ວຍຂົນສັດທີ່ຕົນຫາມາ

ຄຳວ່າ ໃຊ້ ຄື ນັ່ງ ຫຼື ນອນເທິງຕັ່ງຍາວ ຫຼື ເທິງແທ່ນນັ້ນ ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໗໔] ໑. ພິກຂຸນີ ຕັດຕີນຕັ່ງຍາວແລ້ວຈຶ່ງໃຊ້
໒. ພິກຂຸນີ ຮື້ຂົນສັດຂອງແທ່ນແລ້ວຈຶ່ງໃຊ້
໓. ພິກຂຸນີ ວິກົນຈະລິດ
໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໒ ຈົບ**

# ໔. ຈິດຕາຄາຣະວັກ

## ສິກຂາບົດທີ ໑

## ວ່າດ້ວຍການກະຖ້າດ້າຍ

## ເລື້ອງພິກຂຸນີສັບພັກຄີ

[໙໗໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີສັບພັກຄີກໍ້ດ້າຍຢູ່ ຄົນທັງຫຼາຍທ່ຽວຈາຣິກໄປຕາມວິຫານເຫັນແລ້ວຈຶ່ງຕຳໜິ ປະນາມ ໂພນທະນາວ່າ" ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງກໍ້ດ້າຍເໝືອນຍິງຄະລິຫັດຜູ້ບໍຣິໂພກກາມນໍ"

ພິກຂຸນີທັງຫຼາຍ ໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງກໍ້ດ້າຍແນວນັ້ນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີກໍ້ດ້າຍ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງກໍ້ດ້າຍນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກ ສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໙໘໗] ກໍພິກຂຸນີໃດ ກໍ້ດ້າຍ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີສັບພັກຄີ ຈົບ

## ສິກຂາບົດວິພັງ

[໙໘໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ດ້າຍ ໄດ້ແກ່ດ້າຍ ໖ ຊະນິດ ຄື ດ້າຍເປືອກໄມ້ ດ້າຍຝ້າຍ ດ້າຍໄໝ ດ້າຍຂົນສັດ ດ້າຍປ່ານ ດ້າຍທີ່ໃຊ້ວັດຖຸປະສົມໃສ່ກັນ

ຄຳວ່າ ກໍ້ ຄື ກໍ້ເອງ ຕ້ອງອາບັດທຸກກົດໃນຂະນະທີ່ກໍ້ ຕ້ອງອາບັດປາຈິດຕີ ທຸກ ໆ ຂະນະທີ່ມ້ວນເຂົ້າມາ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໘໙] ໑. ພິກຂຸນີ ຖ້າກໍ້ດ້າຍທີ່ຜູ້ອື່ນກໍ້ໄວ້

໔. ພິກຂຸນີ ວິກົນຈະລິດ

໖. ພິກຂຸນີ ຕົ້ນບັນຍັດ

### ສິກຂາບົດທີ ໖ ຈົບ

# ໔. ຈິດຕາຄາຣະວັກ

## ສິກຂາບົດທີ ໔

### ວ່າດ້ວຍການຊ່ອຍກະທຳການຂວນຂວາຍເພື່ອຄະລຶຫັດ

### ເລື້ອງພິກຂຸນີຫຼາຍອົງ

[໗໗໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີຊ່ອຍກະທຳການຂວນຂວາຍເພື່ອຄະລຶຫັດ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພວກພິກຂຸນີ ຈຶ່ງຊ່ອຍກະທຳການຂວນຂວາຍເພື່ອຄະລຶຫັດນໍ” ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີຊ່ອຍກທຳການຂວນຂວາຍເພື່ອຄະລຶຫັດ ແມ່ນບໍ?” ພິກຂຸທັງຫຼາຍທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີຊ່ອຍກະທຳການຂວນຂວາຍເພື່ອຄະລຶຫັດນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໗໗໑] ກໍ ພິກຂຸນີໃດ ຊ່ອຍກະທຳການຂວນຂວາຍເພື່ອຄະລຶຫັດ ຕ້ອງອາບັດປາຈິດຕີ

#### ເລື້ອງພິກຂຸນີຫຼາຍອົງ ຈົບ

### ສິກຂາບົດວິພັງ

[໗໗໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຊ່ອຍກະທຳການຂວນຂວາຍເພື່ອຄະລິຫັດ ຄື ຕົ້ມເຂົ້າຕົ້ມ ຫຸງຫາພັດຕາຫານ ຫຼື ເຮັດຂອງຫຍໍ້າ ຊັກຜ້ານຸ່ງ ຫຼື ຜ້າໂພກເພື່ອຄະລິຫັດ ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໓] ໑. ພິກຂຸນີ ຕົ້ມເຂົ້າຕົ້ມນ້ຳປານະຖວາຍສົງ

໒. ພິກຂຸນີ ຫຸງເຂົ້າຖວາຍສົງ

໓. ພິກຂຸນີ ກະທຳການບູຊາເຈດີ

໔. ພິກຂຸນີ ຕົ້ມເຂົ້າຕົ້ມ ຫຸງຫາພັດຕາຫານ ຫຼື ເຮັດຂອງຫຍໍ້າ ຊັກຜ້ານຸ່ງຜ້າຫົ່ມ ຫຼື ຜ້າໂພກໃຫ້ໄວຍາວັດຈະກອນຂອງຕົນ

໕. ພິກຂຸນີ ວິກົນຈະລິດ

໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

# ໕. ຈິດຕາຄາຣະວັກ

## ສິກຂາບົດທີ ໕

## ວ່າດ້ວຍການບໍ່ຊ່ອຍລະງັບອະທິກອນ

## ເລື້ອງພິກຂຸນີຖຸນລະນັນທາ

[໙໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີອົງໜຶ່ງເຂົ້າໄປຫາພິກຂຸນີຖຸນລະນັນທາກ່າວວ່າ "ແມ່ເຈົ້າໂຜດມາຊ່ອຍລະງັບອະທິກອນນີ້ດ້ວຍເທີ້ນ" ພິກຂຸນີຖຸນລະນັນທາຮັບປາກແຕ່ບໍ່ຊ່ອຍລະງັບ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍລະງັບ ລຳດັບນັ້ນ ພິກຂຸນີນັ້ນໄດ້ບອກເລື້ອງນີ້ໃຫ້ພິກຂຸນີທັງຫຼາຍຮູ້

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາອັນພິກຂຸນີຂໍຮ້ອງຢູ່ວ່າ ແມ່ເຈົ້າໂຜດມາຊ່ອຍລະງັບອະທິກອນນີ້ດ້ວຍເທີ້ນ ຮັບ

ປາກແລ້ວແຕ່ບໍ່ຊ່ອຍລະງັບ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍລະງັບບໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາອັນພິກຂຸນີຂໍຮ້ອງຢູ່ວ່າ ແມ່ເຈົ້າໂຜດມາຊ່ອຍລະງັບອະທິກອນນີ້ດ້ວຍເທີ້ນ ຮັບປາກແລ້ວແຕ່ບໍ່ຊ່ອຍລະງັບ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍລະງັບ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາ ອັນພິກຂຸນີຂໍຮ້ອງຢູ່ວ່າ ແມ່ເຈົ້າໂຜດມາຊ່ອຍລະງັບອະທິກອນນີ້ດ້ວຍເທີ້ນ ຮັບປາກແລ້ວແຕ່ບໍ່ຊ່ອຍລະງັບ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍລະງັບບໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໘໗໕] ກໍ ພິກຂຸນີໃດ ອັນພິກຂຸນີຂໍຮ້ອງຢູ່ວ່າ ແມ່ເຈົ້າໂຜດມາຊ່ອຍລະງັບອະທິກອນນີ້ດ້ວຍເທີ້ນ ຮັບປາກແລ້ວ ພາຍຫຼັງພິກຂຸນີນັ້ນຜູ້ບໍ່ມີອັນຕະລາຍ ບໍ່ຊ່ອຍລະງັບ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍລະງັບ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໘໗໖] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ອັນພິກຂຸນີ ຄື ພິກຂຸນີອົງອື່ນ

ທີ່ຊື່ວ່າ ອະທິກອນ ໄດ້ແກ່ ອະທິກອນ ໔ ຢ່າງ[๑] ຄື (໑) ວິວາທາທິກອນ (໒) ອະນຸວາທາທິກອນ (໓) ອາປັດຕາທິກອນ (໔) ກິດຈາທິກອນ

ຄຳວ່າ ແມ່ເຈົ້າໂຜດມາຊ່ອຍລະງັບອະທິກອນນີ້ດ້ວຍເທີ້ນ ຄວາມວ່າ ເຊີນແມ່ເຈົ້າໄປຊ່ອຍວິນິດໄສຄະດີນີ້ດ້ວຍເທີ້ນ

ຄຳວ່າ ພາຍຫຼັງພິກຂຸນີນັ້ນຜູ້ບໍ່ມີອັນຕະລາຍ ຄື ເມື່ອບໍ່ມີອັນຕະລາຍ

ຄຳວ່າ ບໍ່ຊ່ອຍລະງັບ ຄື ບໍ່ລະງັບດ້ວຍຕົນເອງ

ຄຳວ່າ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍລະງັບ ຄື ບໍ່ສັ່ງຜູ້ອື່ນ ເມື່ອຖືເບົາວ່າ "ເຮົາຈັກບໍ່ລະງັບ ຈັກບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍລະງັບ" ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໙໗] ອຸປະສຳບັນ ພິກຂຸນີສຳຄັນວ່າ ເປັນອຸປະສຳບັນ ບໍ່ຊ່ອຍລະງັບ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍລະງັບອະທິກອນ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸນີບໍ່ແນ່ໃຈ ບໍ່ຊ່ອຍລະງັບ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍລະງັບອະທິກອນ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ບໍ່ຊ່ອຍລະງັບ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ອຍລະງັບອະທິກອນ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸນີບໍ່ຊ່ອຍລະງັບ ບໍ່ຂວນຂວາຍເພື່ອການລະງັບອະທິກອນຂອງອະນຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີບໍ່ແນ່ໃຈ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໘] ໑. ພິກຂຸນີ ບໍ່ລະງັບໃນເມື່ອມີອັນຕະລາຍ

໒. ພິກຂຸນີ ສະແຫວງຫາ (ຄະນະຜູ້ວິນິດໄສອະທິກອນ) ບໍ່ໄດ້

໓. ພິກຂຸນີ ຜູ້ເປັນໄຂ້

໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໕. ພິກຂຸນີ ວິກົນຈະລິດ

໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໕ ຈົບ**

# ໕. ຈິດຕາຄາຣະວັກ

## ສິກຂາບົດທີ ໖

### ວ່າດ້ວຍການໃຫ້ຂອງຫຍໍ້າຂອງສັນແກ່ນັກຟ້ອນເປັນຕົ້ນ

### ເລື້ອງພິກຂຸນີຖຸນລະນັນທາ

[໘໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາໃຫ້ຂອງຫຍໍ້າຂອງສັນດ້ວຍມືຕົນແກ່ພວກຄູນັກຟ້ອນແດ່ ພວກນັກຟ້ອນແດ່ ພວກໂຕນໄມ້ຄໍ້າແດ່ ພວກມາຍາກົນແດ່ ພວກຕີກອງແດ່ ກ່າວວ່າ "ພວກທ່ານຈົ່ງກ່າວພັນນາຄຸນຂອງເຮົາໃນທີ່ຊຸມນຸມຊົນ" ພວກຄູນັກຟ້ອນແດ່ ພວກນັກຟ້ອນແດ່ ພວກໂຕນໄມ້ຄໍ້າແດ່ ພວກມາຍາກົນແດ່ ພວກຕີກອງແດ່ຕ່າງພາກັນກ່າວພັນນາຄຸນຂອງພິກຂຸນີຖຸນລະນັນທາໃນຊຸມນຸມຊົນວ່າ "ພິກຂຸນີຖຸນລະນັນທາເປັນພະຫູສູດ ເປັນນັກເວົ້າ ແກ່ກ້າ ສາມາດກ່າວທຳມີກະຖາ ພວກທ່ານຈົ່ງຖວາຍ ຈົ່ງກະທຳ (ສັກກາຣະ) ແກ່ທ່ານ"

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງໃຫ້ຂອງຫຍໍ້າຂອງສັນດ້ວຍມືຕົນແກ່ຊາວບ້ານນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາໃຫ້ຂອງຫຍໍ້າຂອງສັນດ້ວຍມືຕົນແກ່ຊາວບ້ານ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາ ຈຶ່ງໃຫ້ຂອງຫຍໍ້າຂອງສັນດ້ວຍມືຕົນແກ່ຊາວບ້ານນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໐໐] ກໍພິກຂຸນີໃດ ໃຫ້ຂອງຫຍ້ຳ ຫຼື ຂອງສັນດ້ວຍມືຕົນແກ່ຊາວບ້ານ ແກ່ປະຣິພາຊົກ ຫຼື ແກ່ປະຣິພາຊິກາ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໑໐໐໑] ຄຳວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໆລໆ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຊາວບ້ານ ໄດ້ແກ່ ບຸກຄົນຜູ້ໃດຜູ້ໜຶ່ງທີ່ຢູ່ຄອງເຮືອນ

ທີ່ຊື່ວ່າ ປະຣິພາຊົກ ໄດ້ແກ່ ນັກບວດຊາຍຄົນໃດຄົນໜຶ່ງຜູ້ຢູ່ໃນລັດທິປະຣິພາຊົກ ຍົກເວັ້ນພິກຂຸ ແລະ ສາມະເນນ

ທີ່ຊື່ວ່າ ປະຣິພາຊິກາ ໄດ້ແກ່ ນັກບວດຍິງຄົນໃດຄົນໜຶ່ງຜູ້ຢູ່ໃນລັດທິປະຣິພາຊິກາ ຍົກເວັ້ນພິກຂຸນີ ສິກຂະມານາ ແລະສາມະເນຣີ

ທີ່ຊື່ວ່າ ຂອງຫຍ້ຳ ໄດ້ແກ່ ເວັ້ນໂພຊະນະ ໕ ນ້ຳແລະໄມ້ຖູແຂ້ວ ທີ່ເຫຼືອຊື່ວ່າ ຂອງຫຍ້ຳ

ທີ່ຊື່ວ່າ ຂອງສັນ ໄດ້ແກ່ ໂພຊະນະ ໕ ຢ່າງ ຄື ເຂົ້າສຸກ ຂະໜົມສົດ ເຂົ້າຕູ ປາ ຊີ້ນ

ຄຳວ່າ ໃຫ້ ຄື ໃຫ້ດ້ວຍກາຍ ດ້ວຍຂອງເນື່ອງດ້ວຍກາຍ ຫຼື ດ້ວຍການໂຍນໃຫ້ ຕ້ອງອາບັດປາຈິດຕີ ໃຫ້ນ້ຳແລະໄມ້ຖູແຂ້ວ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໐໔] ໑. ພິກຂຸນີ ໃຊ້ໃຫ້ຜູ້ອື່ນໃຫ້

໒. ພິກຂຸນີ ບໍ່ໄດ້ໃຫ້ເອງ

໓. ພິກຂຸນີ ໃຫ້ໂດຍວາງໄວ້ໃກ້ ໆ

໔. ພິກຂຸນີ ໃຫ້ຂອງລູບທາພາຍນອກ

໕. ພິກຂຸນີ ວິກົນຈະລິດ

໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໖ ຈົບ**

# ໔. ຈິດຕາຄາຣະວັກ

## ສິກຂາບົດທີ ໆ
## ວ່າດ້ວຍການໃຊ້ຜ້າຊັບລະດູແລ້ວບໍ່ສະລະ
## ເລື້ອງພິກຂຸນີຖຸນລະນັນທາ

[໑໐໐໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາໃຊ້ຜ້າຊັບລະດູຄືນດຽວບໍ່ຍອມສະລະ ພິກຂຸນີອື່ນທີ່ມີປະຈຳເດືອນບໍ່ມີໂອກາດໄດ້ໃຊ້

ພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ແມ່ເຈົ້າຖຸນລະນັນທາ ຈຶ່ງໃຊ້ຜ້າຊັບລະດູບໍ່ຍອມສະລະນໍ” ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາໃຊ້ຜ້າຊັບລະດູ ບໍ່ຍອມສະລະ ແມ່ນບໍ?” ພິກຂຸທັງຫຼາຍທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາຈຶ່ງໃຊ້ຜ້າຊັບລະດູບໍ່ຍອມສະລະນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ແລ້ວຈຶ່ງ ຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໐໔] ກໍ ພິກຂຸນີໃດ ໃຊ້ຜ້າຊັບລະດູແລ້ວບໍ່ຍອມສະລະ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໑໐໐໕] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຜ້າຊັບລະດູ ໄດ້ແກ່ ຜ້າທີ່ເຂົາຖວາຍໄວ້ໃຫ້ພິກຂຸນີຜູ້ມີປະຈຳເດືອນໃຊ້

ຄຳວ່າ ບໍ່ຍອມສະລະ ຄື ໃຊ້ ໒-໓ ຄືນແລ້ວ ຊັກໃນວັນທີ ໔ ຍັງໃຊ້ອີກ ບໍ່ຍອມສະລະໃຫ້ແກ່ພິກຂຸນີ ສິກຂະມານາ ຫຼື ສາມະເນຣີອົງອື່ນ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໑໐໐໖] ຜ້າທີ່ຍັງບໍ່ສະລະ ພິກຂຸນີສຳຄັນວ່າຍັງບໍ່ສະລະ ໃຊ້ ຕ້ອງອາບັດປາຈິດຕີ

ຜ້າທີ່ຍັງບໍ່ສະລະ ພິກຂຸນີບໍ່ແນ່ໃຈ ໃຊ້ ຕ້ອງອາບັດປາຈິດຕີ

ຜ້າທີ່ຍັງບໍ່ສະລະ ພິກຂຸນີສຳຄັນວ່າສະລະແລ້ວ ໃຊ້ ຕ້ອງອາບັດປາຈິດຕີ

## ທຸກະທຸກກົດ

ຜ້າທີ່ສະລະແລ້ວ ພິກຂຸນີສຳຄັນວ່າຍັງບໍ່ສະລະ ໃຊ້ ຕ້ອງອາບັດທຸກກົດ

ຜ້າທີ່ສະລະແລ້ວ ພິກຂຸນີສົງໄສ ໃຊ້ ຕ້ອງອາບັດທຸກກົດ

ຜ້າທີ່ສະລະແລ້ວ ພິກຂຸນີສຳຄັນວ່າສະລະແລ້ວ ໃຊ້ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໐໗] ໑. ພິກຂຸນີ ໃຊ້ສອຍແລ້ວສະລະ

໒. ພິກຂຸນີ ໃຊ້ຜ້າທີ່ສະລະແລ້ວອີກ

໓. ພິກຂຸນີ ໃຊ້ສອຍໃນເມື່ອບໍ່ມີພິກຂຸນີອື່ນຜູ້ມີປະຈຳເດືອນ

໔. ພິກຂຸນີ ຖືກຍາດຊິງຜ້າເອົາໄປ

໕. ພິກຂຸນີ ຜ້າຫາຍ

໖. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໗. ພິກຂຸນີ ວິກົນຈະລິດ

໘. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ໔. ຈິດຕາຄາຣະວັກ

## ສິກຂາບົດທີ ໗

## ວ່າດ້ວຍການບໍ່ສະລະທີ່ພັກ

### ເລື້ອງພິກຂຸນີຖຸນລະນັນທາ

[໑໐໐໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາບໍ່ສະລະທີ່ພັກແລ້ວຫຼີກຈາຣິກໄປ ຕໍ່ມາທີ່ພັກນັ້ນຖືກໄຟໄໝ້ ພິກຂຸນີທັງຫຼາຍກ່າວແນວນີ້ວ່າ "ແມ່ເຈົ້າ ພວກເຮົາຈົ່ງຊ່ອຍກັນຂົນຂອງອອກມາ" ພິກຂຸນີບາງພວກກ່າວແນວນີ້ວ່າ "ແມ່ເຈົ້າ ພວກເຮົາບໍ່ຂົນຂອງອອກມາ ສິ່ງໃດສິ່ງໜຶ່ງສູນຫາຍໄປ ແມ່ເຈົ້າຈັກທວງພວກເຮົາ"

ເມື່ອພິກຂຸນີຖຸນລະນັນທາກັບມາສູ່ທີ່ພັກນັ້ນອີກ ຖາມພິກຂຸນີທັງຫຼາຍວ່າ "ແມ່ເຈົ້າ ພວກທ່ານຊ່ອຍຂົນຂອງອອກແດ່ບໍ"

ພິກຂຸນີຕອບວ່າ "ແມ່ເຈົ້າ ພວກເຮົາບໍ່ໄດ້ຊ່ອຍຂົນ"

ພິກຂຸນີຖຸນລະນັນທາຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີ ເມື່ອທີ່ພັກຖືກໄຟໄໝ້ ຈຶ່ງບໍ່ຊ່ອຍກັນຂົນຂອງອອກມານໍ"

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາບໍ່ສະລະທີ່ພັກແລ້ວຫຼີກຈາຣິກໄປນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາບໍ່ສະລະທີ່ພັກແລ້ວຫຼີກຈາຣິກໄປ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາ ບໍ່ສະລະທີ່ພັກແລ້ວຫຼີກຈາຣິກໄປນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງ ບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວ ຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໐໗] ກໍພິກຂຸນີໃດ ບໍ່ສະລະທີ່ພັກກ່ອນແລ້ວຫຼີກໜີຈາຣິກໄປ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຖຸນລະນັນທາ ຈົບ**

## ສິກຂາບົດວິພັງ

[໑໐໑໐] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ທີ່ພັກ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງທີ່ພັກທີ່ຕິດບານປະຕູ

ຄຳວ່າ ບໍ່ສະລະ ຯລຯ ຫຼີກຈາຣິກໄປ ຄວາມວ່າ ບໍ່ສະລະແກ່ພິກຂຸນີ ສິກຂະມານາ ຫຼື ສາມະເນຣີ

ເມື່ອຍ່າງພົ້ນເຂດທີ່ພັກມີຮົ້ວລ້ອມ ຕ້ອງອາບັດປາຈິດຕີ ຍ່າງພົ້ນບໍລິເວນທີ່ພັກທີ່ບໍ່ມີ ຮົ້ວລ້ອມ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໑໐໑໑] ທີ່ພັກທີ່ຍັງບໍ່ສະລະ ພິກຂຸນີສຳຄັນວ່າຍັງບໍ່ໄດ້ສະລະຫຼີກໄປ ຕ້ອງອາບັດປາຈິດຕີ

ທີ່ພັກທີ່ຍັງບໍ່ສະລະ ພິກຂຸນີບໍ່ແນ່ໃຈ ຫຼີກໄປ ຕ້ອງອາບັດປາຈິດຕີ

ທີ່ພັກທີ່ຍັງບໍ່ສະລະ ພິກຂຸນີສຳຄັນວ່າສະລະແລ້ວ ຫຼີກໄປ ຕ້ອງອາບັດປາຈິດຕີ

## ຕິກະທຸກກົດ

ພິກຂຸນີບໍ່ສະລະຫ້ອງພັກບໍ່ໄດ້ຕິດປະຕູ ຫຼີກໄປ ຕ້ອງອາບັດທຸກກົດ

ທີ່ພັກທີ່ສະລະແລ້ວ ພິກຂຸນີສຳຄັນວ່າຍັງບໍ່ສະລະ ຫຼີກໄປ ຕ້ອງອາບັດທຸກກົດ

ທີ່ພັກທີ່ສະລະແລ້ວ ພິກຂຸນີບໍ່ແນ່ໃຈ ຫຼີກໄປ ຕ້ອງອາບັດທຸກກົດ

ທີ່ພັກທີ່ສະລະແລ້ວ ພິກຂຸນີສຳຄັນວ່າສະລະແລ້ວ ຫຼີກໄປ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໑໔] ໑. ພິກຂຸນີ ສະລະແລ້ວຫຼີກໄປ
໒. ພິກຂຸນີ ຫຼີກໄປເມື່ອມີອັນຕະລາຍ
໓. ພິກຂຸນີ ສະແຫວງຫາ (ຜູ້ເບິ່ງແຍງແທນ) ແລ້ວບໍ່ໄດ້
໔. ພິກຂຸນີ ຜູ້ເປັນໄຂ້
໕. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໖. ພິກຂຸນີ ວິກົນຈະລິດ
໗. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ໕. ຈິດຕາຄາຣະວັກ

## ສິກຂາບົດທີ ໘

### ວ່າດ້ວຍການຮຽນເດຍຣັດສານວິຊາ

### ເລື້ອງພິກຂຸນີສັບພັກຄີ

[໑໐໑໓] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີສັບພັກຄີຮຽນເດຍຣັດສານວິຊາ ຊາວບ້ານຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງຮຽນເດຍຣັດສານ ວິຊາເໝືອນແມ່ຍິງຄະລືຫັດຜູ້ບໍຣິໂພກກາມນໍ"

ພິກຂຸນີທັງຫຼາຍໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີສັບພັກຄີ ຈຶ່ງຮຽນເດຍຣັດສານວິຊານໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍ ໃຫ້ຮູ້ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີຮຽນເດຍຣັດສານວິຊາ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງຮຽນເດຍຣັດສານວິຊານໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໑໔] ກໍພິກຂຸນີໃດ ຮຽນເດຍຣັດສານວິຊາ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີສັບພັກຄີ ຈົບ**

## ສິກຂາບົດວິພັງ

[໑໐໑໕] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ເດຍຣັດສານວິຊາ ໝາຍເຖິງ ສິລະປະວິທະຍາຢ່າງໃດຢ່າງໜຶ່ງ ພາຍນອກພຣະສາດສະໜາທີ່ບໍ່ມີປະໂຫຍດ

ຄຳວ່າ ຮຽນ ຄື ຮຽນເປັນບົດ ຕ້ອງອາບັດປາຈິດຕີທຸກ ໆ ບົດ ຮຽນດ້ວຍຕົວອັກສອນຕ້ອງອາບັດປາຈິດຕີທຸກ ໆ ຕົວອັກສອນ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໑໖] ໑. ພິກຂຸນີ ຮຽນວິຊາຂຽນໜັງສື

໒. ພິກຂຸນີ ຮຽນທ່ອງຈຳ

໓. ພິກຂຸນີ ຮຽນພຣະປະຣິດເພື່ອຄຸ້ມຄອງຕົນ[1]

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໙ ຈົບ**

# ໕. ຈິດຕາຄາຣະວັກ

## ສິກຂາບົດທີ ໑໐

### ວ່າດ້ວຍການສອນເດຍຣັດສານວິຊາ

### ເລື້ອງພິກຂຸນີສັບພັກຄີ

[໑໐໑໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີສັບພັກຄີສອນເດຍຣັດສານວິຊາ ຊາວບ້ານຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພວກພິກຂຸນີສັບພັກຄີຈຶ່ງສອນເດຍຣັດສານວິຊາເໝືອນແມ່ຍິງຄະລຶຫັດຜູ້ບໍຣິໂພກກາມນໍ”

ພິກຂຸນີທັງຫຼາຍໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພວກພິກຂຸນີສັບພັກຄີ ຈຶ່ງສອນເດຍຣັດສານວິຊານໍ” ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍ ໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີສອນເດຍຣັດສານວິຊາ ແມ່ນບໍ?” ພິກຂຸທັງຫຼາຍທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງສອນເດຍຣັດສານວິຊານໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໑໗] ກໍ ພິກຂຸນີໃດ ສອນເດຍຣັດສານວິຊາ ຕ້ອງອາບັດປາຈິດຕິ

**ເລື້ອງພິກຂຸນີສັບພັກຄີ ຈົບ**

## ສິກຂາບົດວິພັງ

[໑໐໑໙] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າ ຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີໃນຄວາມໝາຍນີ້

ທີ່ຊື່ວ່າ ເດຍຣັດສານວິຊາ ໝາຍເຖິງ ສິລະປະວິທະຍາຢ່າງໃດຢ່າງໜຶ່ງນອກພຣະສາດສະໜາທີ່ບໍ່ມີປະໂຫຍດ

ຄຳວ່າ ສອນ ຄື ສອນເປັນບົດ ຕ້ອງອາບັດປາຈິດຕິທຸກ ໆ ບົດ ສອນເປັນອັກສອນ ຕ້ອງອາບັດປາຈິດຕິທຸກ ໆ ຕົວອັກສອນ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໒໐] ໑. ພິກຂຸນີ ສອນວິຊາຂຽນໜັງສື
໒. ພິກຂຸນີ ສອນການທ່ອງຈຳ[១]
໓. ພິກຂຸນີ ສອນພຣະປະຣິດເພື່ອຄຸ້ມຄອງ
໔. ພິກຂຸນີ ວິກົນຈະລິດ
໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑໐ ຈົບ**

**ຈິດຕາຄາຣະວັກທີ ໕ ຈົບ**

# ໖. ອາຣາມະວັກ

## ໝວດວ່າດ້ວຍອາຣາມ

## ສິກຂາບົດທີ ໑

## ວ່າດ້ວຍການເຂົ້າອາຣາມ ໂດຍບໍ່ບອກ

### ເລື້ອງພິກຂຸນີຫຼາຍອົງ

[໑໐໔໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸຫຼາຍອົງມີຈີວອນຜືນດຽວກຳລັງຕັດຫຍິບຈີວອນຢູ່ໃນອາວາດໃກ້ໝູ່ບ້ານ ພິກຂຸນີທັງຫຼາຍເຂົ້າໄປສູ່ອາຣາມ ໂດຍບໍ່ບອກເຂົ້າໄປຫາພິກຂຸເຫຼົ່ານັ້ນເຖິງທີ່ຢູ່ ພິກຂຸທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງເຂົ້າມາສູ່ອາຣາມໂດຍບໍ່ບອກນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີເຂົ້າໄປສູ່ອາຣາມ ໂດຍບໍ່ບອກ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີຈຶ່ງເຂົ້າໄປສູ່ອາຣາມໂດຍບໍ່ບອກນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສ ໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງ ໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

ກໍ ພິກຂຸນີໃດ ເຂົ້າໄປສູ່ອາຣາມໂດຍບໍ່ບອກ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແກ່ພິກຂຸນີທັງຫຼາຍແນວນີ້

**ເລື້ອງພິກຂຸນີຫຼາຍອົງ ຈົບ**

## ເລື້ອງພິກຂຸນີບໍ່ປັດກວາດອາຣາມ

[໑໐໔໔] ສະໄໝນັ້ນ ພິກຂຸເຫຼົ່ານັ້ນຫຼີກໄປຈາກອາວາດນັ້ນ ພິກຂຸນີທັງຫຼາຍຄິດວ່າ "ຄູບາທັງຫຼາຍຈາກໄປແລ້ວ" ຈຶ່ງບໍ່ໄປອາຣາມ ເມື່ອພິກຂຸເຫຼົ່ານັ້ນກັບມາສູ່ອາວາດນັ້ນອີກ ພິກຂຸນີທັງຫຼາຍຮູ້ວ່າ "ຄູບາທັງຫຼາຍມາແລ້ວ" ບອກແລ້ວພາກັນເຂົ້າໄປຫາພິກຂຸເຫຼົ່ານັ້ນຂາບໄຫວ້ແລ້ວຢືນຢູ່ໃນທີ່ສົມຄວນ

ພິກຂຸເຫຼົ່ານັ້ນ ໄດ້ກ່າວກັບພິກຂຸນີເຫຼົ່ານັ້ນຜູ້ຢືນຢູ່ ໃນທີ່ສົມຄວນດັ່ງນີ້ວ່າ "ນາງທັງຫຼາຍເປັນຍ້ອນຫຍັງ ພວກທ່ານຈຶ່ງບໍ່ປັດກວາດອາຣາມ ບໍ່ຕັ້ງນ້ຳສັນນ້ຳໃຊ້ໄວ້ນໍ"

ພິກຂຸນີເຫຼົ່ານັ້ນ ຕອບວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ວ່າ ພິກຂຸນີບໍ່ເພິ່ງເຂົ້າອາຣາມ ດັ່ງນັ້ນ ພວກຂ້ານ້ອຍຈຶ່ງບໍ່ມາ"

ພິກຂຸເຫຼົ່ານັ້ນ ໄດ້ຂາບທູນເລື້ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າ ຊົງອະນຸຍາດວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ບອກພິກຂຸນີທີ່ມີຢູ່ແລ້ວເຂົ້າອາຣາມໄດ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ອັນໜຶ່ງ ພິກຂຸນີໃດເຂົ້າໄປສູ່ອາຣາມໂດຍບໍ່ບອກພິກຂຸທີ່ມີຢູ່ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີບໍ່ປັດກວາດອາຣາມ ຈົບ

[໑໐໔໙] ສະໄໝນັ້ນ ພິກຂຸເຫຼົ່ານັ້ນ ຫຼີກໄປຈາກອາວາດນັ້ນແລ້ວກັບມາສູ່ອາວາດນັ້ນອີກ ພິກຂຸນີທັງຫຼາຍຄິດວ່າ "ຄູບາທັງຫຼາຍຈາກໄປແລ້ວ" ຈຶ່ງບໍ່ບອກ ເຂົ້າໄປສູ່ອາຣາມ ພວກທ່ານໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດສິກຂາບົດໄວ້ວ່າ ພິກຂຸນີບໍ່ບອກພິກຂຸທີ່ມີຢູ່ ບໍ່ເພິ່ງເຂົ້າອາຣາມ ພວກເຮົາບໍ່ໄດ້ບອກພິກຂຸທີ່ມີຢູ່ເຂົ້າອາຣາມ ຕ້ອງອາບັດປາຈິດຕີແລ້ວຕີບໍ" ພິກຂຸທັງຫຼາຍ ໄດ້ຂາບທູນເລື້ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບ ສັ່ງກັບພິກຂຸທັງຫຼາຍວ່າ ຯລຯ ແລ້ວຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໑໐໕໐] ອັນໜຶ່ງ ພິກຂຸນີໃດຮູ້ຢູ່ ເຂົ້າໄປສູ່ອາຣາມທີ່ມີພິກຂຸໂດຍບໍ່ບອກ ຕ້ອງອາບັດປາຈິດຕີ

## ສິກຂາບົດວິພັງ

[໑໐໔໕] ຄຳວ່າ ອັນໜຶ່ງ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮູ້ຢູ່ ຄື ພິກຂຸນີຮູ້ເອງ ຄົນເຫຼົ່າອື່ນບອກທ່ານ ຫຼື ພິກຂຸເຫຼົ່ານັ້ນບອກ

ອາຮາມທີ່ຊື່ວ່າ ມີພິກຂຸ ຄື ສະຖານທີ່ມີພິກຂຸອາໄສຢູ່ແມ່ນທີ່ເຫງົ້າຕົ້ນໄມ້

ຄຳວ່າ ເຂົ້າໄປສູ່ອາຮາມໂດຍບໍ່ບອກ ຄື ບໍ່ບອກກ່າວພິກຂຸ ສາມະເນນ ຫຼື ຄົນວັດ ເມື່ອລ່ວງເຂດອາຮາມທີ່ມີຮົ້ວລ້ອມ ຕ້ອງອາບັດປາຈິດຕີ ເມື່ອລ່ວງສູ່ອຸປະຈານແຫ່ງອາຮາມທີ່ມີຮົ້ວລ້ອມ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

[໑໐໔໖] ອາຮາມທີ່ມີພິກຂຸ ພິກຂຸນີສຳຄັນວ່າມີພິກຂຸ ເຂົ້າໄປສູ່ອາຮາມໂດຍບໍ່ບອກພິກຂຸທີ່ມີຢູ່ ຕ້ອງອາບັດປາຈິດຕີ

ອາຮາມທີ່ມີພິກຂຸ ພິກຂຸນີບໍ່ແນ່ໃຈ ເຂົ້າໄປສູ່ອາຮາມໂດຍບໍ່ບອກພິກຂຸທີ່ມີຢູ່ ຕ້ອງອາບັດທຸກກົດ

ອາຮາມທີ່ມີພິກຂຸ ພິກຂຸນີສຳຄັນວ່າບໍ່ມີພິກຂຸ ເຂົ້າໄປສູ່ອາຮາມໂດຍບໍ່ບອກພິກຂຸທີ່ມີຢູ່ ບໍ່ຕ້ອງອາບັດ

ອາຮາມທີ່ບໍ່ມີພິກຂຸ ພິກຂຸນີສຳຄັນວ່າມີພິກຂຸ ເຂົ້າໄປສູ່ອາຮາມໂດຍບໍ່ບອກພິກຂຸທີ່ມີຢູ່ ຕ້ອງອາບັດທຸກກົດ

ອາຮາມທີ່ບໍ່ມີພິກຂຸ ພິກຂຸນີບໍ່ແນ່ໃຈ ເຂົ້າໄປສູ່ອາຮາມໂດຍບໍ່ບອກພິກຂຸທີ່ມີຢູ່ ຕ້ອງອາບັດທຸກກົດ

ອາຮາມທີ່ບໍ່ມີພິກຂຸ ພິກຂຸນີສຳຄັນວ່າບໍ່ມີພິກຂຸ ເຂົ້າໄປສູ່ອາຮາມໂດຍບໍ່ບອກພິກຂຸທີ່ມີຢູ່ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໔໗] ໑. ພິກຂຸນີ ເຂົ້າໄປໂດຍບອກພິກຂຸທີ່ມີຢູ່

໒. ພິກຂຸບໍ່ມີຢູ່ ພິກຂຸນີຈຶ່ງເຂົ້າໄປໂດຍບໍ່ບອກ

໓. ພິກຂຸນີ ເຂົ້າໄປຢ່າງແນມເຫັນຫົວພິກຂຸນີຜູ້ເຂົ້າໄປກ່ອນ

໔. ພິກຂຸນີ ໄປໃນສະຖານທີ່ມີພິກຂຸນີກຳລັງປະຊຸມກັນ
໕. ພິກຂຸນີ ຍ່າງຕາມທາງທີ່ຜ່ານໄປອາຣາມ
໖. ພິກຂຸນີ ຜູ້ເປັນໄຂ້
໗. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໘. ພິກຂຸນີ ວິກົນຈະລິດ
໙. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑ ຈົບ**

# ໖. ອາຣາມະວັກ

## ສິກຂາບົດທີ ໔

## ວ່າດ້ວຍການດ່າບໍຣິພາດພິກຂຸ

### ເລື້ອງພຣະກັບປິຕະກະ

[໑໐໔໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນ ທ່ານພຣະກັບປິຕະກະຜູ້ເປັນອຸປັດຊາຂອງທ່ານພຣະອຸບາລີພັກຢູ່ໃນປ່າຊ້າ ເວລານັ້ນ ມີພິກຂຸນີອົງໜຶ່ງອາຍຸຫຼາຍກວ່າພວກພິກຂຸນີສັບພັກຄີ ມໍຣະນະພາບ ພວກພິກຂຸນີສັບພັກຄີຊ່ອຍກັນນຳ (ສົບ) ພິກຂຸນີນັ້ນອອກໄປເຜົາແລ້ວກໍ່ສະຖູບໄວ້ບໍ່ໄກທີ່ພັກຂອງພຣະກັບປິຕະກະແລ້ວຮ້ອງໄຫ້ທີ່ສະຖູບນັ້ນ ລຳດັບນັ້ນ ທ່ານພຣະກັບປິຕະກະລຳຄານສຽງນັ້ນຈຶ່ງໄດ້ທຳລາຍສະຖູບນັ້ນຈົນມຸ່ນລະອຽດ

ພວກພິກຂຸນີສັບພັກຄີປຶກສາກັນວ່າ “ພຣະກັບປິຕະກະທຳລາຍສະຖູບແມ່ເຈົ້າຂອງພວກເຮົາ ມາເທີ້ນ ພວກເຮົາຈະຂ້າພຣະກັບປິຕະກະນັ້ນ”

ພິກຂຸນີອົງໜຶ່ງບອກຄວາມນັ້ນ ໃຫ້ທ່ານພຣະອຸບາລີຮູ້ ທ່ານພຣະອຸບາລີນຳເລື້ອງນັ້ນ ໄປບອກທ່ານພຣະກັບປິຕະກະ ທ່ານພຣະກັບປິຕະກະໜີອອກຈາກວິຫານໄປລີ້ຢູ່

ເວລານັ້ນພວກພິກຂຸນີສັບພັກຄີເຂົ້າໄປທີ່ວິຫານຂອງທ່ານພຣະກັບປິຕະກະຕັ້ງຢູ່ ເມື່ອແລ້ວຊ່ອຍກັນຂົນກ້ອນຫີນ ແລະ ກ້ອນດິນທັບວິຫານຂອງທ່ານ ແລ້ວຈາກໄປດ້ວຍເຂົ້າໃຈວ່າ “ພຣະກັບປິຕະກະມໍຣະນະພາບແລ້ວ”

ເມື່ອຣາຕີນັ້ນຜ່ານໄປ ທ່ານພຣະກັບປິຕະກະຄອງອັນຕະຣະວາສົກຖືບາດ ແລະຈີວອນເຂົ້າໄປບິນທະບາດໃນນະຄອນເວສາລີແຕ່ເຊົ້າ ພວກພິກຂຸນີສັບພັກຄີເຫັນທ່ານຍ່າງທ່ຽວບິນທະ

ບາດຢູ່ ກ່າວກັນແນວນີ້ວ່າ "ພຣະກັບປິຕະກະຍັງມີຊີວິດຢູ່ ໃຜກັນນໍ ທີ່ນຳແຜນການຂອງພວກເຮົາໄປບອກ" ເມື່ອໄດ້ຮູ້ວ່າ "ທ່ານອຸບາລີນຳແຜນການຂອງພວກເຮົາໄປບອກ" ຈຶ່ງພາກັນດ່າທ່ານພຣະອຸບາລີວ່າ "ທ່ານຜູ້ເປັນຂ້າທາດຮັບໃຊ້ ເມື່ອເວລາອາບນ້ຳ ຖ້າຖູຂີ້ໄຄ ມີຕະກູນຕ່ຳຄົນນີ້ ເປັນຫຍັງ ຈຶ່ງນຳແຜນການຂອງເຮົາໄປບອກນໍ"

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີສັບພັກຄີຈຶ່ງດ່າທ່ານອຸບາລີນໍ" ເມື່ອແລ້ວພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກ ພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີດ່າອຸບາລີ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງດ່າອຸບາລີນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

**[໑໐໔໗] ກໍພິກຂຸນີໃດ ດ່າ ຫຼື ບໍຣິພາດພິກຂຸ ຕ້ອງອາບັດປາຈິດຕີ**

**ເລື້ອງພຣະກັບປິຕະກະ ຈົບ**

## ສິກຂາບົດວິພັງ

[໑໐໘໐] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ພິກຂຸ ໄດ້ແກ່ ອຸປະສຳບັນ

ຄຳວ່າ ດ່າ ຄື ດ່າດ້ວຍອັກໂກສະວັດຖຸ ໑໐ ຢ່າງ[໑] ຕ້ອງອາບັດປາຈິດຕີ

ຄຳວ່າ ບໍຣິພາດ ຄື ສະແດງອາການທີ່ເປັນຕາຢ້ານ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕິ

[໑໐໓໑] ອຸປະສຳບັນ ພິກຂຸນີສຳຄັນວ່າ ເປັນອຸປະສຳບັນ ດ່າ ຫຼື ບໍຣິພາດ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸນີບໍ່ແນ່ໃຈ ດ່າ ຫຼື ບໍຣິພາດ ຕ້ອງອາບັດປາຈິດຕີ

ອຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ດ່າ ຫຼື ບໍຣິພາດ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸນີດ່າ ຫຼື ບໍຣິພາດອະນຸປະສຳບັນ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອຸປະສຳບັນ ດ່າ ຫຼື ບໍຣິພາດ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີບໍ່ແນ່ໃຈ ດ່າ ຫຼື ບໍຣິພາດ ຕ້ອງອາບັດທຸກກົດ

ອະນຸປະສຳບັນ ພິກຂຸນີສຳຄັນວ່າເປັນອະນຸປະສຳບັນ ດ່າຫຼືບໍຣິພາດ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໓໘] ໑. ພິກຂຸນີ ມຸ້ງອັດຖະ

໒. ພິກຂຸນີ ມຸ້ງທຳ

໓. ພິກຂຸນີ ມຸ້ງສັ່ງສອນ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໘ ຈົບ**

# ໖. ອາຣາມະວັກ

## ສິກຂາບົດທີ ໖

## ວ່າດ້ວຍການບໍຣິພາດຄະນະ

## ເລື້ອງພິກຂຸນີຈັນທະກາລີ

[໑໐໖໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຈັນທະກາລີມັກກໍ່ຄວາມໝາງໃຈ ກໍ່ການຜິດຖຽງ ກໍ່ການວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງ ເມື່ອສົງເຮັດກຳແກ່ຈັນທະກາລີນັ້ນ ພິກຂຸນີຖຸນລະນັນທາກໍຄັດຄ້ານ

ຕໍ່ມາ ພິກຂຸນີຖຸນລະນັນທາເດີນທາງໄປສູ່ໝູ່ບ້ານດ້ວຍວຽກງານບາງຢ່າງ ພິກຂຸນີສົງພໍຮູ້ວ່າ "ພິກຂຸນີຖຸນລະນັນທາຈາກໄປແລ້ວ" ຈຶ່ງລົງອຸກເປກນີຍະກຳແກ່ພິກຂຸນີຈັນທະກາລີຍ້ອນບໍ່ເຫັນອາບັດ ເມື່ອພິກຂຸນີຖຸນລະນັນທາເຮັດວຽກງານນັ້ນໃນໝູ່ບ້ານສຳເລັດແລ້ວກັບມາ

ໃນເມືອງສາວັດຖີ ເມື່ອພິກຂຸນີຖຸນລະນັນທາກຳລັງມາ ພິກຂຸນີຈັນທະກາລີບໍ່ປູອາສະນະ ບໍ່ຕັ້ງນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ບໍ່ລຸກຮັບບາດແລະຈີວອນ ບໍ່ເອົານ້ຳດື່ມ ຕ້ອນຮັບ

ພິກຂຸນີຖຸນລະນັນທາໄດ້ກ່າວກັບພິກຂຸນີຈັນທະກາລີນັ້ນດັ່ງນີ້ວ່າ "ເມື່ອເຮົາກຳລັງມາ ເປັນຫຍັງທ່ານບໍ່ປູອາສະນະ ບໍ່ຕັ້ງນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ບໍ່ລຸກຮັບບາດແລະຈີວອນ ບໍ່ເອົານ້ຳດື່ມຕ້ອນຮັບນໍ"

ພິກຂຸນີຈັນທະກາລີຕອບວ່າ "ແມ່ເຈົ້າ ຄົນບໍ່ມີທີ່ເພິ່ງກໍເປັນແນວນີ້ແລ້ວ"

ພິກຂຸນີຖຸນລະນັນທາຖາມວ່າ "ເປັນຍ້ອນຫຍັງທ່ານຈຶ່ງບໍ່ມີທີ່ເພິ່ງ"

ພິກຂຸນີຈັນທະກາລີຕອບວ່າ "ແມ່ເຈົ້າ ພິກຂຸນີເຫຼົ່ານີ້ເຂົ້າໃຈວ່າ ເຮົາບໍ່ມີທີ່ເພິ່ງ ບໍ່ມີຊື່ສຽງ ບໍ່ມີໃຜຖ້າກ່າວປົກປ້ອງ ຈຶ່ງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນອາບັດ"

ພິກຂຸນີຖຸນລະນັນທາຈຶ່ງຮ້າຍຄຽດບໍຣິພາດຄະນະວ່າ "ພິກຂຸນີພວກນີ້ໂງ່ຈ້າ ພິກຂຸນີພວກນີ້ບໍ່ສະຫຼາດ ພິກຂຸນີພວກນີ້ບໍ່ຮູ້ຈັກກຳ ໂທດຂອງກຳ ກຳວິບັດ ຫຼື ກຳສົມບັດ"

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາ ຈຶ່ງຮ້າຍຄຽດບໍຣິພາດຄະນະນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາຮ້າຍຄຽດ ບໍຣິພາດຄະນະ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາຈຶ່ງຮ້າຍຄຽດບໍຣິພາດຄະນະນໍ ພິກຂຸທັງຫຼາຍ ການກະທໍາແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ ເຫຼື້ອມໄສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວ ຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໑໐໓໔] ກໍພິກຂຸນີໃດ ຮ້າຍຄຽດ ບໍຣິພາດຄະນະ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຈັນທະກາລີ ຈົບ**

### ສິກຂາບົດວິພັງ

[໑໐໓໕] ຄໍາວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄໍາວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຮ້າຍຄຽດ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຄວາມໂກດ

ທີ່ຊື່ວ່າ ຄະນະ ຕັດໝາຍເຖິງພິກຂຸນີສົງ

ຄໍາວ່າ ບໍຣິພາດ ຄື ບໍຣິພາດວ່າ "ພິກຂຸນີພວກນີ້ ໂງ່ຈ້າ ພິກຂຸນີພວກນີ້ບໍ່ສະຫຼາດ ພິກຂຸນີພວກນີ້ບໍ່ຮູ້ຈັກກໍາ ໂທດຂອງກໍາ ກໍາວິບັດ ຫຼື ກໍາສົມບັດ" ຕ້ອງອາບັດປາຈິດຕີ ບໍຣິພາດພິກຂຸນີຫຼາຍອົງ ພິກຂຸນີອົງດຽວ ຫຼື ອະນຸປະສໍາບັນ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໓໖] ໑. ພິກຂຸນີ ມຸ້ງອັດຖະ

໒. ພິກຂຸນີ ມຸ້ງທໍາ

໓. ພິກຂຸນີ ມຸ້ງສັ່ງສອນ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໓ ຈົບ**

# ຝ. ອາຣາມະວັກ

## ສິກຂາບົດທີ ໘

## ວ່າດ້ວຍການສັນຂອງຫຍໍ້າຂອງສັນເມື່ອຫ້າມພັດຕາຫານແລ້ວ ເລື້ອງພິກຂຸນີສັນຫຼາຍທີ່ໃນມື້ດຽວກັນ

[໑໐໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພາມຄົນໜຶ່ງນິມົນພິກຂຸນີທັງຫຼາຍໃຫ້ສັນ ພວກພິກຂຸນີສັນແລ້ວ ຫ້າມພັດຕາຫານແລ້ວ ພາກັນໄປຕະກູນຍາດ ພິກຂຸນີບາງພວກຍັງສັນອີກ ບາງພວກນຳບິນທະບາດກັບໄປ

ຄັ້ງນັ້ນ ພາມນັ້ນໄດ້ກ່າວກັບເພື່ອນບ້ານຜູ້ຄຸ້ນເຄີຍດັ່ງນີ້ວ່າ "ທ່ານທັງຫຼາຍ ເຮົາລ້ຽງພິກຂຸນີໃຫ້ອີ່ມໜຳແລ້ວ ເຊີນມາເທີ້ນ ເຮົາຈັກລ້ຽງພວກທ່ານໃຫ້ອີ່ມໜຳແດ່"

ເພື່ອນບ້ານຜູ້ຄຸ້ນເຄີຍເຫຼົ່ານັ້ນກ່າວແນວນີ້ວ່າ "ທ່ານຈະລ້ຽງພວກເຮົາໃຫ້ອີ່ມໄດ້ ຢ່າງໃດ ແມ່ນພວກພິກຂຸນີທີ່ທ່ານນິມົນແລ້ວກໍຍັງຕ້ອງໄປທີ່ເຮືອນພວກເຮົາ ບາງພວກຍັງສັນອີກ ບາງພວກກໍນຳບິນທະບາດກັບໄປ"

ພາມຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີສັນຢູ່ເຮືອນເຮົາແລ້ວຍັງໄປສັນທີ່ອື່ນອີກແນວນັ້ນນໍ ເຮົາບໍ່ສາມາດທີ່ຈະຖວາຍໃຫ້ພໍແກ່ຄວາມຕ້ອງການແມ່ນບໍ?"

ພິກຂຸນີທັງຫຼາຍໄດ້ຍິນພາມຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີສັນແລ້ວ ຫ້າມພັດຕາຫານແລ້ວຍັງສັນໃນທີ່ອື່ນອີກ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັນແລ້ວ ຫ້າມພັດຕາຫານແລ້ວຍັງສັນໃນທີ່ອື່ນອີກ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີສັນແລ້ວ ຫ້າມພັດຕາຫານແລ້ວ ຍັງສັນໃນທີ່ອື່ນອີກນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນ ທີ່ຍັງບໍ່ເຫຼື້ອມ

ໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໓໗] ກໍ ພິກຂຸນີໃດ ໄດ້ຮັບນິມົນແລ້ວ ບອກຫ້າມພັດຕາຫານແລ້ວ ຫຍໍ້າຂອງຫຍໍ້າ ຫຼືສັນຂອງສັນ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີສັນຫຼາຍທີ່ໃນມື້ດຽວກັນ ຈົບ

## ສິກຂາບົດວິພັງ

[໑໐໓໙] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ໄດ້ຮັບນິມົນແລ້ວ ຄື ໄດ້ຮັບນິມົນດ້ວຍໂພຊະນະ ໕ ຊະນິດ ຢ່າງໃດຢ່າງໜຶ່ງ

## ລັກສະນະການບອກຫ້າມພັດຕາຫານ

ທີ່ຊື່ວ່າ ບອກຫ້າມພັດຕາຫານແລ້ວ ຄື (໑) ພິກຂຸນີກຳລັງສັນ (໒) ທາຍົກນຳໂພຊະນະມາຖວາຍ (໓) ທາຍົກຢູ່ໃນຫັດຖະບາດນ້ອມຖວາຍ (໔) ພິກຂຸນີບອກຫ້າມ

ທີ່ຊື່ວ່າ ຂອງຫຍໍ້າ ຄື ຍົກເວັ້ນໂພຊະນະ ໕ ເຂົ້າຕົ້ມ ຍາມະກາລິກ ສັດຕາຫະກາລິກ ແລະຍາວະຊີວິກ ນອກນັ້ນຊື່ວ່າ ຂອງຫຍໍ້າ

ທີ່ຊື່ວ່າ ຂອງສັນ ໄດ້ແກ່ ໂພຊະນະ ໕ ຢ່າງ ຄື ເຂົ້າສຸກ ຂະໜົມສົດ ເຂົ້າຕູ ປາ ຊີ້ນ

ພິກຂຸນີຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຫຍໍ້າ ຈະສັນ" ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດປາຈິດຕີທຸກ ໆ ຄຳກືນ

## ບົດພາຊະນີ

### ຕິກະປາຈິດຕີ

[໑໐໔໐] ໄດ້ຮັບນິມົນແລ້ວ ພິກຂຸນີສຳຄັນວ່າໄດ້ຮັບນິມົນແລ້ວ ຫຍໍ້າຂອງຫຍໍ້າ ຫຼື ສັນຂອງສັນ ຕ້ອງອາບັດປາຈິດຕີ

ໄດ້ຮັບນິມົນແລ້ວ ພິກຂຸນີບໍ່ແນ່ໃຈ ຫຍໍ້າຂອງຫຍໍ້າ ຫຼື ສັນຂອງສັນ ຕ້ອງອາບັດປາຈິດຕີ

ໄດ້ຮັບນິມົນແລ້ວ ພິກຂຸນີສຳຄັນວ່າຍັງບໍ່ໄດ້ຮັບນິມົນ ຫຍໍ້າຂອງຫຍໍ້າ ຫຼື ສັນຂອງສັນ ຕ້ອງອາບັດປາຈິດຕີ

### ທຸກະທຸກກົດ

ພິກຂຸນີຮັບປະເຄນຍາມະກາລິກ ສັດຕາຫະກາລິກ ຍາວະຊີວິກ ເພື່ອເປັນອາຫານ ຕ້ອງອາບັດທຸກກົດ ສັນ ຕ້ອງອາບັດທຸກກົດທຸກໆ ຄຳກືນ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໔໑] ໑. ພິກຂຸນີ ທີ່ຫາຍັກບໍ່ໄດ້ນິມົນ

໒. ພິກຂຸນີ ຍັງບໍ່ຫ້າມພັດຕາຫານ

໓. ພິກຂຸນີ ດື່ມເຂົ້າຕົ້ມ

໔. ພິກຂຸນີ ບອກເຈົ້າຂອງແລ້ວສັນ

໕. ພິກຂຸນີ ສັນຂອງທີ່ເປັນຍາວະກາລິກ ສັດຕາຫະກາລິກແລະຍາວະຊີວິກເມື່ອມີເຫດຜົນຈຳເປັນ

໖. ພິກຂຸນີ ວິກົນຈະລິດ

໗. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

# ໖. ອາຣາມະວັກ

## ສິກຂາບົດທີ ໕

## ວ່າດ້ວຍຄວາມຫວງຕະກູນ

## ເລື້ອງພິກຂຸນີຫວງຕະກູນ

[໑໐໔໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີອົງໜຶ່ງທ່ຽວບິນທະບາດໃນຮ່ອມແຫ່ງໜຶ່ງໃນນະຄອນສາວັດຖີ ເຂົ້າໄປທີ່ຕະກູນແຫ່ງໜຶ່ງ ນັ່ງເທິງອາສະນະທີ່ເຂົາປູໄວ້ ເມື່ອຄົນທັງຫຼາຍນິມົນທ່ານໃຫ້ສັນແລ້ວກ່າວດັ່ງນີ້ວ່າ "ແມ່ນພິກຂຸນີອື່ນ ໆ ກໍນິມົນມາເທີ້ນຂ້ານ້ອຍ"

ຂະນະນັ້ນ ພິກຂຸນີນັ້ນຄິດວ່າ ເຮັດຢ່າງໃດ ພິກຂຸນີອື່ນ ໆ ຈຶ່ງຈະບໍ່ມາ ຈຶ່ງເຂົ້າໄປຫາພິກຂຸນີທັງຫຼາຍບອກວ່າ "ໃນທີ່ນັ້ນໝາຮ້າຍ ງົວຮ້າຍ ສະຖານທີ່ມື່ນ ພວກທ່ານຢ່າໄປທີ່ນັ້ນເລີຍ"

ພິກຂຸນີແມ່ນອີກອົງໜຶ່ງໄດ້ໄປບິນທະບາດຢູ່ຮ່ອມນັ້ນ ເຂົ້າໄປທີ່ຕະກູນນັ້ນຕັ້ງຢູ່ ເມື່ອແລ້ວນັ່ງເທິງອາສະນະທີ່ເຂົາປູໄວ້ ລຳດັບນັ້ນ ຄົນທັງຫຼາຍນິມົນໃຫ້ພິກຂຸນີນັ້ນສັນແລ້ວ ໄດ້ກ່າວດັ່ງນີ້

ວ່າ "ແມ່ເຈົ້າ ເປັນຫຍັງ ພິກຂຸນີທັງຫຼາຍ ຈຶ່ງບໍ່ມາ" ຄັ້ງນັ້ນ ພິກຂຸນີນັ້ນບອກເລື່ອງນັ້ນໃຫ້ຄົນທັງຫຼາຍຮູ້ ຄົນທັງຫຼາຍຈຶ່ງຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີ ຈຶ່ງຫວງຕະກູນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນໍາເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນໍາເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຫວງຕະກູນ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງຫວງຕະກູນນໍ ພິກຂຸທັງຫຼາຍ ການກະທໍາຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໔໓] ກໍພິກຂຸນີໃດ ຫວງຕະກູນ ຕ້ອງອາບັດປາຈິດຕີ

**ເລື່ອງພິກຂຸນີຫວງຕະກູນ ຈົບ**

## ສິກຂາບົດວິພັງ

[໑໐໔໔] ຄໍາວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄໍາວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີ ພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຕະກູນ ໝາຍເຖິງຕະກູນ ໔ ໄດ້ແກ່ ຕະກູນກະສັດ ຕະກູນພາມ ຕະກູນແພດ ຕະກູນສູດ

ທີ່ຊື່ວ່າ ຫວງ ຄື ພິກຂຸນີກ່າວໂທດຂອງຕະກູນໃນສໍານັກພິກຂຸນີທັງຫຼາຍດ້ວຍປະສົງວ່າ "ເຮັດຢ່າງໃດ ພິກຂຸນີທັງຫຼາຍຈຶ່ງຈະບໍ່ມາ" ຕ້ອງອາບັດປາຈິດຕີ ຫຼື ກ່າວໂທດພິກຂຸນີໃນສໍານັກຕະກູນ ຕ້ອງອາບັດປາຈິດຕີ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໔໕] ໑. ພິກຂຸນີ ບໍ່ໄດ້ຫວງຕະກູນແຕ່ບອກສະເພາະໂທດທີ່ມີຢູ່
໔. ພິກຂຸນີ ວິກົນຈະລິດ
໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໕ ຈົບ**

# ໒. ອາຣາມະວັກ

## ສິກຂາບົດທີ ໒

### ວ່າດ້ວຍການຢູ່ຈຳພັນສາໃນອາວາດທີ່ບໍ່ມີພິກຂຸ

### ເລື້ອງພິກຂຸນີຫຼາຍອົງ

[໑໐໔໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຫຼາຍອົງອອກພັນສາແລ້ວໃນອາວາດໃກ້ໝູ່ບ້ານ ພາກັນໄປນະຄອນສາວັດຖີ ພິກຂຸນີທັງຫຼາຍໄດ້ກ່າວກັບພິກຂຸນີເຫຼົ່ານັ້ນດັ່ງນີ້ວ່າ "ແມ່ເຈົ້າທັງຫຼາຍ ຈຳພັນສາຢູ່ໄສ ການຮັບໂອວາດສຳເລັດຜົນດີຢູ່ແມ່ນບໍ?"

ພິກຂຸນີເຫຼົ່ານັ້ນ ຕອບວ່າ "ແມ່ເຈົ້າ ໃນອາວາດທີ່ພວກເຮົາຈຳພັນສາບໍ່ມີພິກຂຸເລີຍ ແລ້ວຈະສຳເລັດຜົນໄດ້ມາແຕ່ໄສ"

ບັນດາພິກຂຸນີຜູ້ມັກໜ້ອຍ ฯລฯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງຈຳພັນສາໃນອາວາດທີ່ບໍ່ມີພິກຂຸນໍ"[១] ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີຈຳພັນສາໃນອາວາດ ທີ່ບໍ່ມີພິກຂຸ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງ

ຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີ ຈຶ່ງຈຳພັນສາໃນອາວາດທີ່ບໍ່ມີພິກຂຸນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສ ໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງ ໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໔໗] ກໍ ພິກຂຸນີໃດ ຈຳພັນສາໃນອາວາດທີ່ບໍ່ມີພິກຂຸ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໐໔໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ອາວາດທີ່ຊື່ວ່າ ບໍ່ມີພິກຂຸ ໄດ້ແກ່ ອາວາດທີ່ພິກຂຸນີບໍ່ສາມາດໄປຮັບໂອວາດ ຫຼື ທຳອັນເປັນເຫດຢູ່ຮ່ວມກັນໄດ້

ພິກຂຸນີຕັ້ງໃຈວ່າ "ຈະຈຳພັນສາ" ແລ້ວຈັດແຈງເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ໄວ້ ປັດກວາດບໍລິເວນ ຕ້ອງອາບັດທຸກກົດ ພໍອະຣຸນຂຶ້ນ ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໔໙] ໑. ພິກຂຸນີ ຈຳພັນສາໃນອາວາດທີ່ມີພິກຂຸຢູ່ຈຳພັນສາ ຫຼີກໄປ ສິກ ມໍຣະນະພາບ ຫຼື ໄປເຂົ້າຮີດເດຍຣະຖີ
໒. ພິກຂຸນີຜູ້ມີເຫດຂັດຂ້ອງ
໓. ພິກຂຸນີວິກົນຈະລິດ
໔. ພິກຂຸນີຕົ້ນບັນຍັດ

### ສິກຂາບົດທີ ໖ ຈົບ

# ຜ. ອາຣາມະວັກ

## ສິກຂາບົດທີ ໗

## ວ່າດ້ວຍການບໍ່ປະວາຣະນາໃນສົງ ໒ ຝ່າຍ

### ເລື້ອງພິກຂຸນີຫຼາຍອົງ

[໑໐໕໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຫຼາຍອົງອອກພັນສາໃນອາວາດໃກ້ໝູ່ບ້ານແລ້ວພາກັນໄປນະຄອນສາວັດຖີ ພິກຂຸນີທັງຫຼາຍໄດ້ກ່າວກັບພິກຂຸນີເຫຼົ່ານັ້ນດັ່ງນີ້ວ່າ "ທ່ານທັງຫຼາຍຈຳພັນສາຢູ່ໄສ ໄດ້ປະວາຣະນາຕໍ່ພິກຂຸສົງແລ້ວແມ່ນບໍ?"

ພິກຂຸນີເຫຼົ່ານັ້ນຕອບວ່າ "ພວກເຮົາຍັງບໍ່ໄດ້ປະວາຣະນາຕໍ່ພິກຂຸສົງເລີຍ ຂ້ານ້ອຍ"

ພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຳພັນສາແລ້ວບໍ່ປະວາຣະນາຕໍ່ພິກຂຸສົງນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີຈຳພັນສາແລ້ວບໍ່ປະວາຣະນາຕໍ່ພິກຂຸສົງ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີຈຳພັນສາແລ້ວຈຶ່ງບໍ່ປະວາຣະນາຕໍ່ພິກຂຸສົງນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໑໐໕໑] ກໍ ພິກຂຸນີໃດ ຈຳພັນສາແລ້ວ ບໍ່ປະວາຣະນາໃນສົງ ໒ ຝ່າຍດ້ວຍຖານະ ໓ ຄືດ້ວຍໄດ້ເຫັນ ດ້ວຍໄດ້ຍິນ ຫຼື ດ້ວຍຣະແວງສົງໄສ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຫຼາຍອົງ ຈົບ**

## ສິກຂາບົດວິພັງ

[໑໐໕໔] ຄຳວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໆລໆ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຈຳພັນສາແລ້ວ ຄື ຢູ່ຈຳພັນສາຕົ້ນ ໓ ເດືອນ ຫຼື ພັນສາຫຼັງ ໓ ເດືອນ

ພິກຂຸນີ ພໍຖືເບົາວ່າ " ເຮົາຈະບໍ່ປະວາຣະນາໃນສົງ ໔ ຝ່າຍດ້ວຍຖານະ ໓ ຄື ດ້ວຍໄດ້ເຫັນ ດ້ວຍໄດ້ຍິນ ຫຼື ດ້ວຍຣະແວງສົງໄສ" ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໕໓] ໑. ພິກຂຸນີ ບໍ່ປະວາຣະນາໃນເມື່ອມີອັນຕະລາຍ
໔. ພິກຂຸນີ ສະແຫວງຫາແລ້ວແຕ່ບໍ່ໄດ້
໓. ພິກຂຸນີ ຜູ້ເປັນໄຂ້
໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໕. ພິກຂຸນີ ວິກົນຈະລິດ
໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ໖. ອາຣາມະວັກ

## ສິກຂາບົດທີ ໘

## ວ່າດ້ວຍການບໍ່ໄປຮັບໂອວາດເປັນຕົ້ນ

## ເລື້ອງພິກຂຸນີສັບພັກຄີ

[໑໐໕໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວ້ນສັກກະ ຄັ້ງນັ້ນ ພວກພິກຂຸສັບພັກຄີໄປສຳນັກພິກຂຸນີແລ້ວກ່າວສອນພວກພິກຂຸນີສັບພັກຄີ

ພິກຂຸນີທັງຫຼາຍ ໄດ້ກ່າວກັບພວກພິກຂຸນີສັບພັກຄີດັ່ງນີ້ວ່າ "ມາເທີ້ນ ແມ່ເຈົ້າທັງຫຼາຍ ພວກເຮົາຈະໄປຮັບໂອວາດ"

ພິກຂຸນີສັບພັກຄີກ່າວວ່າ "ພວກເຮົາຈະໄປຮັບໂອວາດເຮັດຫຍັງກັນ ຍ້ອນວ່າຄູບາສັບພັກຄີມາໃຫ້ໂອວາດພວກເຮົາເຖິງທີ່ນີ້ແລ້ວ"

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີສັບພັກຄີຈຶ່ງບໍ່ໄປຮັບໂອວາດນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີບໍ່ໄປຮັບໂອວາດແມ່ນບໍ?" ພິກຂຸທັງຫຼາຍ ທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີສັບພັກຄີບໍ່ໄປຮັບໂອວາດນໍ ພິກຂຸທັງຫຼາຍການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໕໔] ກໍ ພິກຂຸນີໃດ ບໍ່ໄປຮັບໂອວາດ ຫຼື ທຳເປັນໃຫ້ເຫດຢູ່ຮ່ວມກັນໄດ້ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີສັບພັກຄີ ຈົບ

## ສິກຂາບົດວິພັງ

[໑໐໕໕] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ໂອວາດ ໄດ້ແກ່ ຄະຣຸທຳ ໘ ປະການ

ທີ່ຊື່ວ່າ ທຳເປັນເຫດຢູ່ຮ່ວມກັນ ໄດ້ແກ່ ກຳທີ່ເຮັດຮ່ວມກັນ ອຸດເຫດທີ່ສູດຮ່ວມກັນ ຄວາມມີສິກຂາສະເໝີກັນ

ພິກຂຸນີພໍຖືເປົາວ່າ "ເຮົາຈະບໍ່ໄປຮັບໂອວາດຫຼືທຳເປັນເຫດຢູ່ຮ່ວມກັນ" ຕ້ອງອາບັດປາຈິດຕີ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໕໗] ໑. ພິກຂຸນີ ບໍ່ໄປຮັບໂອວາດໃນເມື່ອມີອັນຕະລາຍ

໒. ພິກຂຸນີ ສະແຫວງຫາແລ້ວແຕ່ບໍ່ໄດ້ພິກຂຸນີເປັນເພື່ອນ

໓. ພິກຂຸນີ ຜູ້ເປັນໄຂ້

໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໕. ພິກຂຸນີ ວິກົນຈະລິດ

໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໘ ຈົບ**

# ໖. ອາຣາມະວັກ

## ສິກຂາບົດທີ ໑

## ວ່າດ້ວຍການບໍ່ຖາມອຸໂປສົດເປັນຕົ້ນ

## ເລື້ອງພິກຂຸນີບໍ່ຖາມອຸໂປສົດ ບໍ່ຂໍໂອວາດ

[໑໐໕໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີບໍ່ຖາມອຸໂປສົດແດ່ ບໍ່ຂໍໂອວາດແດ່ ພິກຂຸທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງບໍ່ຖາມອຸໂປສົດແດ່ ບໍ່ຂໍໂອວາດແດ່ນໍ"

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີບໍ່ຖາມອຸໂປສົດແດ່ ບໍ່ຂໍໂອວາດແດ່ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ

ຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີບໍ່ຖາມອຸໂປສົດແດ່ ບໍ່ຂໍໂອວາດແດ່ນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໕໙] ກໍ ພິກຂຸນີເພິ່ງຫວັງທຳ ໒ ຢ່າງຈາກພິກຂຸສົງທຸກ ໆ ເຄິ່ງເດືອນ ຄື ການຖາມອຸໂປສົດ ໑ ການເຂົ້າໄປຂໍໂອວາດ ໑ ຜູ້ຝ່າຝືນທຳ ໒ ຢ່າງນັ້ນ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີບໍ່ຖາມອຸໂປສົດ ບໍ່ຂໍໂອວາດ ຈົບ

## ສິກຂາບົດວິພັງ

[໑໐໖໐] ຄຳວ່າ ທຸກ ໆ ເຄິ່ງເດືອນ ຄື ທຸກວັນອຸໂປສົດ

ທີ່ຊື່ວ່າ ອຸໂປສົດ ໄດ້ແກ່ ອຸໂປສົດ ໒ ຢ່າງ ຄື ອຸໂປສົດວັນ ໑໔ ຄ່ຳ ແລະອຸໂປສົດ ວັນ ໑໕ ຄ່ຳ

ທີ່ຊື່ວ່າ ໂອວາດ ໄດ້ແກ່ ຄະຣຸທຳ ໘ ຢ່າງ

ພິກຂຸນີຖືເປົາວ່າ "ເຮົາຈະບໍ່ຖາມອຸໂປສົດແດ່ ຈະບໍ່ຂໍໂອວາດແດ່" ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໖໑] ໑. ພິກຂຸນີ ບໍ່ຖາມອຸໂປສົດແລະບໍ່ຂໍໂອວາດໃນເມື່ອມີອັນຕະລາຍ

໒. ພິກຂຸນີ ສະແຫວງຫາແລ້ວແຕ່ບໍ່ໄດ້ພິກຂຸນີເປັນເພື່ອນ

໓. ພິກຂຸນີ ຜູ້ເປັນໄຂ້

໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໕. ພິກຂຸນີ ວິກົນຈະລິດ

໖. ພິກຂຸນີ ຕົ້ນບັນຍັດ

### ສິກຂາບົດທີ ໙ ຈົບ

# ໖. ອາຣາມະວັກ

## ສິກຂາບົດທີ ໑໐

## ວ່າດ້ວຍການໃຫ້ບົ່ງຝີໃນຮົ່ມຜ້າ

## ເລື້ອງພິກຂຸນີອົງໜຶ່ງ

[໑໐໗໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີອົງໜຶ່ງໃຫ້ບົ່ງຝີທີ່ເກີດໃນຮົ່ມຜ້າຢູ່ກັບສອງຕໍ່ສອງກັບຊາຍ ລຳດັບນັ້ນ ຊາຍນັ້ນ ພະຍາຍາມຈະຂົ່ມຂືນພິກຂຸນີນັ້ນ ທ່ານໄດ້ສົ່ງສຽງຮ້ອງຂຶ້ນ ພິກຂຸນີທັງຫຼາຍແລ່ນເຂົ້າໄປໄດ້ກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ "ແມ່ເຈົ້າ ທ່ານສົ່ງສຽງຮ້ອງເປັນຫຍັງ" ທ່ານຈຶ່ງບອກເລື້ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້

ບັນດາພິກຂຸນີຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງໃຊ້ຊາຍໃຫ້ບົ່ງຝີທີ່ເກີດໃນຮົ່ມຜ້າຢູ່ກັບສອງຕໍ່ສອງກັບຊາຍແນວນັ້ນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີໃຊ້ບຸຣຸດໃຫ້ບົ່ງຝີທີ່ເກີດໃນຮົ່ມຜ້າຢູ່ກັບສອງຕໍ່ສອງກັບບຸຣຸດ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໆລໆ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງໃຊ້ບຸຣຸດໃຫ້ບົ່ງຝີທີ່ເກີດໃນຮົ່ມຜ້າຢູ່ກັບສອງຕໍ່ສອງກັບບຸຣຸດນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວ ໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ໆລໆ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໑໐໗໙] ກໍ ພິກຂຸນີໃດ ບໍ່ບອກສົງ ຫຼື ຄະນະ ໃຊ້ໃຫ້ບົ່ງ ໃຫ້ຜ່າ ໃຫ້ຊະລ້າງ ໃຫ້ທາ ໃຫ້ພັນ ຫຼື ໃຫ້ແກະຝີ ຫຼື ບາດແຜທີ່ເກີດໃນຮົ່ມຜ້າຢູ່ກັບສອງຕໍ່ສອງກັບຊາຍ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີອົງໜຶ່ງ ຈົບ**

## ສິກຂາບົດວິພັງ

[໑໐໗໔] ຄຳວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໆລໆ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ໃນຮົ່ມຜ້າ ໄດ້ແກ່ ບໍລິເວນໃຕ້ສາຍບືລົງມາ ເໜືອເຂົ່າຂຶ້ນໄປ

ຄຳວ່າ ທີ່ເກີດ ຄື ທີ່ເກີດໃນບໍລິເວນນັ້ນ

ທີ່ຊື່ວ່າ ຝີ ໄດ້ແກ່ ຝີຊະນິດໃດຊະນິດໜຶ່ງ

ທີ່ຊື່ວ່າ ບາດແຜ ໄດ້ແກ່ ບາດແຜຢ່າງໃດຢ່າງໜຶ່ງ

ຄຳວ່າ ບໍ່ບອກ ຄື ບໍ່ແຈ້ງໃຫ້ຮູ້

ທີ່ຊື່ວ່າ ສົງ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງພິກຂຸນີສົງ

ທີ່ຊື່ວ່າ ຄະນະ ຕັດໝາຍເຖິງພິກຂຸນີຫຼາຍອົງ

ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸດຜູ້ຊາຍ ບໍ່ແມ່ນຍັກ ບໍ່ແມ່ນເຜດ ບໍ່ແມ່ນສັດເດຍຣັດສານ

ຕົວຜູ້ ແຕ່ເປັນມະນຸດຜູ້ຊາຍທີ່ຮູ້ດຽງສາ ສາມາດທີ່ຈະເຮັດບໍ່ດີໄດ້

ຄຳວ່າ ນຳກັນ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ສອງຕໍ່ສອງ ຄື ບຸຣຸດແລະພິກຂຸນີ

[໑໐໗໕] ພິກຂຸນີສັ່ງວ່າ "ຈົ່ງບົ່ງ" ຕ້ອງອາບັດທຸກກົດ ເມື່ອບົ່ງສຳເລັດ ຕ້ອງອາບັດປາຈິດຕີ
ພິກຂຸນີສັ່ງວ່າ "ຈົ່ງຜ່າ" ຕ້ອງອາບັດທຸກກົດ ເມື່ອຜ່າສຳເລັດ ຕ້ອງອາບັດປາຈິດຕີ
ພິກຂຸນີສັ່ງວ່າ "ຈົ່ງລ້າງ" ຕ້ອງອາບັດທຸກກົດ ເມື່ອລ້າງສຳເລັດ ຕ້ອງອາບັດປາຈິດຕີ
ພິກຂຸນີສັ່ງວ່າ "ຈົ່ງທາ" ຕ້ອງອາບັດທຸກກົດ ເມື່ອທາສຳເລັດ ຕ້ອງອາບັດປາຈິດຕີ
ພິກຂຸນີສັ່ງວ່າ "ຈົ່ງພັນ" ຕ້ອງອາບັດທຸກກົດ ເມື່ອພັນສຳເລັດ ຕ້ອງອາບັດປາຈິດຕີ
ພິກຂຸນີສັ່ງວ່າ "ຈົ່ງແກະ" ຕ້ອງອາບັດທຸກກົດ ເມື່ອແກະສຳເລັດ ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໗໖] ໑. ພິກຂຸນີບອກສົງ ຫຼື ຄະນະແລ້ວຈຶ່ງໃຫ້ບົ່ງ ໃຫ້ຜ່າ ໃຫ້ລ້າງ ໃຫ້ທາ ໃຫ້ພັນ ຫຼື ໃຫ້ແກະ

໒. ພິກຂຸນີມີສະຕິຜູ້ຮູ້ດຽງສາຢູ່ເປັນເພື່ອນ

໓. ພິກຂຸນີວິກົນຈະລິດ
໔. ພິກຂຸນີຕົ້ນບັນຍັດ

**ສິກຂາບົດທີ ໑໐ ຈົບ**

**ອາຣາມະວັກທີ ໘ ຈົບ**

# ໗. ຄັບພິນີວັກ

## ໝວດວ່າດ້ວຍສະຕີຖືພາ

## ສິກຂາບົດທີ ໑
### ວ່າດ້ວຍການບວດໃຫ້ສະຕີຖືພາ
### ເລື້ອງພິກຂຸນີຫຼາຍອົງ

[໑໐໘໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍບວດໃຫ້ສະຕີຖືພາ ທ່ານທ່ຽວບິນທະບາດ ຄົນທັງຫຼາຍກ່າວແນວນີ້ວ່າ "ທ່ານທັງຫຼາຍຈົ່ງຖວາຍພິກສາຫານແກ່ແມ່ເຈົ້າ ແມ່ເຈົ້າຖືພາແກ່" ແລ້ວຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງບວດໃຫ້ສະຕີຖືພານໍ"

ພິກຂຸນີທັງຫຼາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງບວດໃຫ້ສະຕີຖືພານໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີບວດໃຫ້ສະຕີຖືພາ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີຈຶ່ງບວດໃຫ້ສະຕີຖືພານໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້

ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໓໗] ກໍ ພິກຂຸນີໃດ ບວດໃຫ້ສະຕີຖືພາ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໐໓໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ສະຕີຖືພາ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຍິງທີ່ມີສັດມາຖືປະຕິສົນທິ

ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ (ສູດ) ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໔ ຄັ້ງ ຕ້ອງອາບັດທຸກກົດ ໔ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ບົດພາຊະນີ

| | | | |
|---|---|---|---|
| [໑໐໓໙] | ສະຕີຖືພາ | ພິກຂຸນີສຳຄັນວ່າຖືພາ | ບວດໃຫ້ ຕ້ອງອາບັດປາຈິດຕີ |
| | ສະຕີຖືພາ | ພິກຂຸນີບໍ່ແນ່ໃຈ | ບວດໃຫ້ ຕ້ອງອາບັດທຸກກົດ |
| | ສະຕີຖືພາ | ພິກຂຸນີສຳຄັນວ່າບໍ່ຖືພາ | ບວດໃຫ້ ບໍ່ຕ້ອງອາບັດ |
| | ສະຕີບໍ່ຖືພາ | ພິກຂຸນີສຳຄັນວ່າຖືພາ | ບວດໃຫ້ ຕ້ອງອາບັດທຸກກົດ |
| | ສະຕີບໍ່ຖືພາ | ພິກຂຸນີບໍ່ແນ່ໃຈ | ບວດໃຫ້ ຕ້ອງອາບັດທຸກກົດ |
| | ສະຕີບໍ່ຖືພາ | ພິກຂຸນີສຳຄັນວ່າບໍ່ຖືພາ | ບວດໃຫ້ ບໍ່ຕ້ອງອາບັດ |

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໗໑] ໑. ສະຕີຖືພາ ພິກຂຸນີສຳຄັນວ່າບໍ່ຖືພາ ຈຶ່ງບວດໃຫ້
໔. ສະຕີບໍ່ຖືພາ ພິກຂຸນີສຳຄັນວ່າບໍ່ຖືພາ ຈຶ່ງບວດໃຫ້
໕. ພິກຂຸນີ ວິກົນຈະລິດ
໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑ ຈົບ**

# ໗. ຄັບພິນີວັກ

## ສິກຂາບົດທີ ໔

### ວ່າດ້ວຍການບວດໃຫ້ສະຕີມີລູກຍັງດື່ມນົມ

### ເລື່ອງພິກຂຸນີຫຼາຍອົງບວດໃຫ້ສະຕີມີລູກຍັງດື່ມນົມ

[໑໐໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍ ບວດໃຫ້ສະຕີມີລູກຍັງດື່ມນົມ ທ່ານທ່ຽວບິນທະບາດ ຄົນທັງຫຼາຍກ່າວແນວນີ້ວ່າ "ທ່ານທັງຫຼາຍ ຈົ່ງຖວາຍພິກສາຫານແກ່ແມ່ເຈົ້າ ແມ່ເຈົ້າມີລູກ" ແລ້ວຕຳໜິວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງບວດໃຫ້ສະຕີມີລູກຍັງດື່ມນົມນໍ"

ພິກຂຸນີທັງຫຼາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງບວດໃຫ້ສະຕີມີລູກຍັງດື່ມນົມນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີບວດໃຫ້ສະຕີມີລູກຍັງດື່ມນົມ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີຈຶ່ງບວດໃຫ້ສະຕີມີລູກຍັງດື່ມນົມນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່

ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໗໘] ກໍ ພິກຂຸນີໃດ ບວດໃຫ້ສະຕີມີລູກຍັງດື່ມນົມ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງໃຫ້ສະຕີມີລູກຍັງດື່ມນົມບວດ ຈົບ

## ສິກຂາບົດວິພັງ

[໑໐໗໔] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ສະຕີມີລູກຍັງດື່ມນົມ ໄດ້ແກ່ ສະຕີທີ່ເປັນມານດາ ຫຼື ເປັນແມ່ນົມ

ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ (ສູດ) ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໔ ຄັ້ງ ຕ້ອງອາບັດທຸກກົດ ໔ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ບົດພາຊະນີ

[໑໐໗໕] ສະຕີມີລູກຍັງດື່ມນົມ ພິກຂຸນີສຳຄັນວ່າມີລູກຍັງດື່ມນົມ ບວດໃຫ້ ຕ້ອງອາບັດປາຈິດຕີ

ສະຕີມີລູກຍັງດື່ມນົມ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ

ສະຕີມີລູກຍັງດື່ມນົມ ພິກຂຸນີສຳຄັນວ່າບໍ່ມີລູກຍັງດື່ມນົມ ບວດໃຫ້ ບໍ່ຕ້ອງອາບັດ

ສະຕີບໍ່ມີລູກຍັງດື່ມນົມ ພິກຂຸນີສຳຄັນວ່າມີລູກຍັງດື່ມນົມ ບວດໃຫ້ ຕ້ອງອາບັດທຸກກົດ

ສະຕີບໍ່ມີລູກຍັງດື່ມນົມ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ

ສະຕີບໍ່ມີລູກຍັງດື່ມນົມ ພິກຂຸນີສຳຄັນວ່າບໍ່ມີລູກຍັງດື່ມນົມ ບວດໃຫ້ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໗໘] ໑. ສະຕີມີລູກຍັງດື່ມນົມ ພິກຂຸນີສຳຄັນວ່າບໍ່ມີລູກຍັງດື່ມນົມ ຈຶ່ງບວດໃຫ້
໒. ສະຕີບໍ່ມີລູກຍັງດື່ມນົມ ພິກຂຸນີສຳຄັນວ່າບໍ່ມີລູກຍັງດື່ມນົມ ຈຶ່ງບວດໃຫ້
໓. ພິກຂຸນີ ວິກົນຈະລິດ
໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໒ ຈົບ**

# ໗. ຄັບພິນີວັກ

## ສິກຂາບົດທີ ໓

## ວ່າດ້ວຍການບວດໃຫ້ສິກຂະມານາຜູ້ຍັງບໍ່ໄດ້ສຶກສາທຳ ໖ ຂໍ້ຕະຫຼອດ ໒ ປີ ເລື່ອງພິກຂຸນີຫຼາຍອົງ

[໑໐໗໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍບວດໃຫ້ສິກຂະມານາ ຜູ້ບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີ ສິກຂະມານາຜູ້ບວດເປັນພິກຂຸນີເຫຼົ່ານັ້ນໂງ່ຈ້າ ບໍ່ສະຫຼາດ ບໍ່ຮູ້ສິ່ງທີ່ຄວນ ຫຼື ບໍ່ຄວນ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງບວດໃຫ້ສິກຂະມານາຜູ້ບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີບວດໃຫ້ສິກຂະມານາຜູ້ຍັງບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີຈຶ່ງບວດໃຫ້ສິກຂະມານາຜູ້ຍັງບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວ

ໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ເມື່ອຊົງຕຳໜິແລ້ວ ຊົງສະແດງທຳມິກະຖາ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີສົງໃຫ້ສິກຂາສົມມຸດໃນທຳ ໖ ຂໍ້ ເປັນເວລາ ໒ ປີແກ່ສິກຂະມານາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ສິກຂາສົມມຸດແນວນີ້

## ວິທີຂໍສິກຂາສົມມຸດ ແລະ ກຳມະວາຈາໃຫ້ສິກຂາສົມມຸດ

ສິກຂະມານານັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີທັງຫຼາຍແລ້ວນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ຂ້ານ້ອຍຊື່ນີ້ ເປັນສິກຂະມານາຂອງແມ່ເຈົ້າຊື່ນີ້ຂໍສິກຂາສົມມຸດໃນທຳ ໖ ຂໍ້ເປັນເວລາ ໒ ປີຕໍ່ສົງ"

ເພິ່ງຂໍແມ່ນຄັ້ງທີ ໒

ເພິ່ງຂໍແມ່ນຄັ້ງທີ ໓

ພິກຂຸນີຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາ ວ່າ

[໑໐໗໘] ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ສິກຂະມານາຊື່ນີ້ຂອງແມ່ເຈົ້າຊື່ນີ້ຂໍສິກຂາສົມມຸດໃນທຳ ໖ ຂໍ້ເປັນເວລາ ໒ ປີຕໍ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ສິກຂາສົມມຸດໃນທຳ ໖ ຂໍ້ເປັນເວລາ ໒ ປີແກ່ສິກຂະມານາຊື່ນີ້ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ສິກຂະມານາຊື່ນີ້ຂອງແມ່ເຈົ້າຊື່ນີ້ຂໍສິກຂາສົມມຸດໃນທຳ ໖ ຂໍ້ເປັນເວລາ ໒ ປີຕໍ່ສົງ ສົງໃຫ້ສິກຂາສົມມຸດໃນທຳ ໖ ຂໍ້ ເປັນເວລາ ໒ ປີແກ່ສິກຂະມານາຊື່ນີ້ ແມ່ເຈົ້າອົງໃດເຫັນດ້ວຍກັບການໃຫ້ສິກຂາສົມມຸດໃນທຳ ໖ ຂໍ້ເປັນເວລາ ໒ ປີແກ່ສິກຂະມານາຊື່ນີ້ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງໂຈດ

ສິກຂາສົມມຸດໃນທຳ ໖ ຂໍ້ເປັນເວລາ ໒ ປີ ສົງໃຫ້ແກ່ສິກຂະມານາຊື່ນີ້ແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

[໑໐໗໙] ເພິ່ງບອກສິກຂະມານາຜູ້ນັ້ນວ່າ "ທ່ານຈົ່ງກ່າວແນວນີ້ວ່າ

໑. ເຮົາຂໍສະມາທານງົດເວັ້ນຈາກການຂ້າສັດ ໂດຍບໍ່ລ່ວງລະເມີດຕະຫຼອດ ໒ ປີ
໒. ຯລຯ ຖືເອົາຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ໂດຍບໍ່ລ່ວງລະເມີດຕະຫຼອດ ໒ ປີ
໓. ຯລຯ ພຶດຕິກຳອັນບໍ່ແມ່ນພົມມະຈັນ ໂດຍບໍ່ລ່ວງລະເມີດຕະຫຼອດ ໒ ປີ
໔. ຯລຯ ການເວົ້າຕົວະ ໂດຍບໍ່ລ່ວງລະເມີດຕະຫຼອດ ໒ ປີ
໕. ຯລຯ ດື່ມນ້ຳເມົາຄືສຸຣາແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດ ໂດຍບໍ່ລ່ວງລະເມີດຕະຫຼອດ ໒ ປີ
໖. ຯລຯ ບໍຣິໂພກອາຫານໃນເວລາວິການ ໂດຍບໍ່ລ່ວງລະເມີດຕະຫຼອດ ໒ ປີ"

ພຣະຜູ້ມີພຣະພາກເຈົ້າ ເມື່ອຊົງຕຳໜິພິກຂຸນີເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຕັດໂທດແຫ່ງຄວາມເປັນຜູ້ລ້ຽງຍາກ ຯລຯ ແລ້ວຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໗໐] ກໍ ພິກຂຸນີໃດ ບວດໃຫ້ສິກຂະມານາຜູ້ຍັງບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໔ ປີ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໐໗໑] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ຕະຫຼອດ ໔ ປີ ຄື ຈົນກວ່າຈະສິ້ນໄລຍະເວລາ ໔ ປີ

ທີ່ຊື່ວ່າ ຜູ້ຍັງບໍ່ໄດ້ສຶກສາສິກຂາ ຄື ພິກຂຸນີສົງຍັງບໍ່ໄດ້ໃຫ້ສິກຂາ ຫຼື ໃຫ້ແລ້ວ ແຕ່ທ່ານເຮັດຂາດ

ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໔ ຄັ້ງ ຕ້ອງອາບັດທຸກກົດ ໔ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ບົດພາຊະນີ

### ຕິກະປາຈິດຕີ

[໑໐໗໔] ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບວດໃຫ້ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບວດໃຫ້ ຕ້ອງອາບັດປາຈິດຕີ

## ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບວດໃຫ້ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບວດໃຫ້ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໗໕] ໑. ພິກຂຸນີບວດໃຫ້ສິກຂະມານາຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໔ ປີ
໔. ພິກຂຸນີ ວິກົນຈະລິດ
໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໕ ຈົບ**

# ໆ. ຄັບພິນີວັກ

## ສິກຂາບົດທີ ໔

## ວ່າດ້ວຍການບວດໃຫ້ສິກຂະມານາທີ່ສົງຍັງບໍ່ໄດ້ສົມມຸດ

## ເລື້ອງພິກຂຸນີຫຼາຍອົງ

[໑໐໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍບວດໃຫ້ສິກຂະມານາ ຜູ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໔ ປີ ແຕ່ສົງຍັງບໍ່ໄດ້ສົມມຸດ ພິກຂຸນີທັງຫຼາຍກ່າວຢ່າງນີ້ວ່າ "ສິກຂະມານາທັງຫຼາຍ ພວກທ່ານຈົ່ງມານີ້ ຈົ່ງຮູ້ສິ່ງນີ້ ປະເຄນສິ່ງນີ້ ນຳສິ່ງນີ້ມາ ເຮົາຕ້ອງການສິ່ງນີ້ ຈົ່ງເຮັດສິ່ງນີ້ໃຫ້ເປັນກັບປິຍະ"

ສິກຂະມານາເຫຼົ່ານັ້ນ ຕອບວ່າ "ແມ່ເຈົ້າ ພວກຂ້ານ້ອຍບໍ່ແມ່ນສິກຂະມານາ ພວກຂ້ານ້ອຍເປັນພິກຂຸນີ"

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງບວດໃຫ້ສິກຂະມານາຜູ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໔ ປີ ແຕ່ສົງຍັງບໍ່ໄດ້ສົມ

ມຸດບໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີທັງຫຼາຍບວດໃຫ້ສິກຂະມານາຜູ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແຕ່ສົງຍັງບໍ່ໄດ້ສົມມຸດ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ ພິກຂຸທັງຫຼາຍເປັນຫຍັງ ພວກພິກຂຸນີຈຶ່ງບວດໃຫ້ສິກຂະມານາຜູ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແຕ່ສົງຍັງບໍ່ໄດ້ສົມມຸດບໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ເມື່ອຊົງຕຳໜິແລ້ວ ຊົງສະແດງທຳມີກະຖາ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີສົງໃຫ້ວຸດຖານສົມມຸດແກ່ສິກຂະມານາຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ວຸດຖານສົມມຸດ ຢ່າງນີ້

## ວິທີຂໍວຸດຖານສົມມຸດແລະກຳມະວາຈາໃຫ້ວຸດຖານສົມມຸດ

ສິກຂະມານາຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວນັ້ນເພິ່ງເຂົ້າໄປຫາສົງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີທັງຫຼາຍ ນັ່ງຢ່ອງຢໍ້ ປະນົມມື ກ່າວແບບນີ້ວ່າ "ແມ່ເຈົ້າ ຂ້ານ້ອຍຊື່ນີ້ເປັນສິກຂະມານາຂອງແມ່ເຈົ້າຊື່ນີ້ ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ຂໍວຸດຖານສົມມຸດຕໍ່ສົງ"

ເພິ່ງຂໍແມ່ນຄັ້ງທີ ໒
ເພິ່ງຂໍແມ່ນຄັ້ງທີ ໓
ພິກຂຸນີຜູ້ສະຫຼາດສາມາດ ເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາ ວ່າ

[໑໐໗໕] ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ສິກຂະມານາຊື່ນີ້ຂອງແມ່ເຈົ້າຊື່ນີ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ຂໍວຸດຖານສົມມຸດຕໍ່ສົງ ຖ້າສົງພ້ອມກັນແລ້ວກໍເພິ່ງໃຫ້ວຸດຖານສົມມຸດແກ່ສິກຂະມານາຊື່ນີ້ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ສິກຂະມານາຊື່ນີ້ຂອງແມ່ເຈົ້າຊື່ນີ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ຂໍວຸດຖານສົມມຸດຕໍ່ສົງ ສົງໃຫ້ວຸດຖານສົມມຸດແກ່ ສິກຂະມານາຊື່ນີ້ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ແມ່ເຈົ້າອົງໃດເຫັນດ້ວຍ ກັບການໃຫ້ວຸດຖານ

ສົມມຸດແກ່ສິກຂະມານາຊື່ນີ້ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງໂຈດ

ວຸດຖານສົມມຸດສົງໃຫ້ແລ້ວ ແກ່ສິກຂະມານາຊື່ນີ້ ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນ ເປັນມະຕິແນວນີ້"

ພຣະຜູ້ມີພຣະພາກເຈົ້າ ເມື່ອຊົງຕຳໜິພິກຂຸນີເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຕັດໂທດແຫ່ງຄວາມເປັນຜູ້ລ້ຽງຍາກ ຯລຯ" ແລ້ວຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໗໖] ກໍພິກຂຸນີໃດບວດໃຫ້ສິກຂະມານາ ຜູ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວແຕ່ສົງຍັງບໍ່ໄດ້ສົມມຸດ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໐໗໗] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ຕະຫຼອດ ໒ ປີ ຄື ສິ້ນ ໒ ປີ

ທີ່ຊື່ວ່າ ຜູ້ສຶກສາສິກຂາ ຄື ໄດ້ສຶກສາສິກຂາໃນທຳ ໖ ຂໍ້ແລ້ວ

ທີ່ຊື່ວ່າ ແຕ່ສົງຍັງບໍ່ໄດ້ສົມມຸດ ຄື ແຕ່ສົງຍັງບໍ່ໄດ້ໃຫ້ວຸດຖານສົມມຸດດ້ວຍຍັດຕິທຸຕິຍະກຳ

ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼືສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດທຸກກົດ ໒ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ບົດພາຊະນີ

### ຕິກະປາຈິດຕິ

[໑໐໗໗] ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບວດໃຫ້ ຕ້ອງອາບັດປາຈິດຕິ

ກຳທີ່ເຮັດຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດປາຈິດຕິ

ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າ ເປັນກຳທີ່ເຮັດບໍ່ຖືກຕ້ອງ ບວດໃຫ້ ຕ້ອງອາບັດປາຈິດຕິ

### ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງພິກຂຸນີສຳຄັນວ່າ ເປັນກຳທີ່ເຮັດຖືກຕ້ອງ ບວດໃຫ້ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບວດໃຫ້ ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໗໘] ໑. ພິກຂຸນີບວດໃຫ້ສິກຂະມານາ ຜູ້ໄດ້ສຶກສາສິກຂາໃນທຳ ໒ ຂໍ້ຕະຫຼອດ ໒ ປີ ທີ່ສົງສົມມຸດແລ້ວ

໒. ພິກຂຸນີ ວິກົນຈະລິດ

໓. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

# ໗. ຄັບພິນີວັກ

## ສິກຂາບົດທີ ໕

## ວ່າດ້ວຍການບວດໃຫ້ຍິງທີ່ມີຄອບຄົວອາຍຸຕ່ຳກວ່າ ໑໒ ປີ

## ເລື້ອງພິກຂຸນີຫຼາຍອົງ

[໑໐໗໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍບວດໃຫ້ຍິງທີ່ມີ

ຄອບຄົວມີອາຍຸຕ່ຳກວ່າ ໑໘ ປີ ຍິງທີ່ບວດເປັນພິກຂຸນີເຫຼົ່ານັ້ນບໍ່ອົດທົນ ບໍ່ອົດກັ້ນ ຕໍ່ຄວາມເຢັນ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ສຳຜັດຈາກເຫຼືອດ ຍຸງ ລົມ ແດດ ສັດເລືອຄານ ຄຳກ່າວຮ້າຍ ຄຳທີ່ຟັງແລ້ວບໍ່ດີ ຄວາມຮູ້ສຶກທາງກາຍທີ່ເກີດຂຶ້ນເປັນທຸກ ແສນສາຫັດ ຮຸນແຮງ ເຜັດຮ້ອນ ທີ່ບໍ່ໜ້າຍິນດີ ບໍ່ໜ້າພໍໃຈເກືອບຈະພາກຊີວິດ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີ ຈຶ່ງບວດໃຫ້ຍິງທີ່ມີຄອບຄົວມີອາຍຸຕ່ຳກວ່າ ໑໘ ປີນໍ" ເມື່ອແລ້ວ ພິກຂຸນີ ເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີບວດໃຫ້ຍິງທີ່ມີຄອບຄົວມີອາຍຸຕ່ຳກວ່າ ໑໘ ປີ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີຈຶ່ງບວດໃຫ້ຍິງທີ່ມີຄອບຄົວມີອາຍຸຕ່ຳກວ່າ ໑໘ ປີນໍ ພິກຂຸທັງຫຼາຍ ຍ້ອນວ່າຍິງອາຍຸຕ່ຳກວ່າ ໑໘ ປີ ຍັງບໍ່ອົດທົນ ບໍ່ອົດກັ້ນຕໍ່ຄວາມເຢັນ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ສຳຜັດຈາກເຫຼືອດ ຍຸງ ລົມ ແດດ ສັດເລືອຄານ ຄຳກ່າວຮ້າຍ ຄຳທີ່ຟັງແລ້ວບໍ່ດີ ຄວາມຮູ້ສຶກທາງກາຍ ທີ່ເກີດຂຶ້ນເປັນທຸກ ແສນສາຫັດ ຮຸນແຮງ ເຜັດຮ້ອນ ທີ່ບໍ່ໜ້າຍິນດີ ບໍ່ໜ້າພໍໃຈເກືອບຈະພາກຊີວິດ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໗໑] ກໍ ພິກຂຸນີໃດ ບວດໃຫ້ຍິງທີ່ມີຄອບຄົວ ມີອາຍຸຕ່ຳກວ່າ ໑໘ ປີ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໐໗໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ອາຍຸຕ່ຳກວ່າ ໑໒ ປີ ຄື ອາຍຸບໍ່ເຖິງ ໑໒ ປີ

ທີ່ຊື່ວ່າ ຍິງທີ່ມີຄອບຄົວ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຍິງທີ່ເຄີຍຢູ່ຮ່ວມກັບຊາຍ

ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດທຸກກົດ ໒ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ບົດພາຊະນີ

[໑໐໗໓] ຍິງອາຍຸຕ່ຳກວ່າ ໑໒ ປີ ພິກຂຸນີສຳຄັນວ່າມີອາຍຸຕ່ຳກວ່າ ໑໒ ປີ ບວດໃຫ້ ຕ້ອງອາບັດປາຈິດຕີ

ຍິງອາຍຸຕ່ຳກວ່າ ໑໒ ປີ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ

ຍິງອາຍຸຕ່ຳກວ່າ ໑໒ ປີ ພິກຂຸນີສຳຄັນວ່າຄົບ ບວດໃຫ້ ບໍ່ຕ້ອງອາບັດ

ຍິງອາຍຸຄົບ ໑໒ ປີ ພິກຂຸນີສຳຄັນວ່າມີອາຍຸຕ່ຳກວ່າ ໑໒ ປີ ບວດໃຫ້ ຕ້ອງອາບັດທຸກກົດ

ຍິງອາຍຸຄົບ ໑໒ ປີ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ

ຍິງມີອາຍຸຕ່ຳກວ່າ ໑໒ ປີ ພິກຂຸນີສຳຄັນວ່າຄົບ ບວດໃຫ້ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໗໔] ໑. ຍິງມີອາຍຸຕ່ຳກວ່າ ໑໒ ປີ ພິກຂຸນີສຳຄັນວ່າອາຍຸຄົບ ຈຶ່ງບວດໃຫ້

໒. ຍິງມີອາຍຸຄົບ ໑໒ ປີ ພິກຂຸນີສຳຄັນວ່າອາຍຸຄົບ ຈຶ່ງບວດໃຫ້

໓. ພິກຂຸນີວິກົນຈະລິດ

໔. ພິກຂຸນີຕົ້ນບັນຍັດ

**ສິກຂາບົດທີ ໕ ຈົບ**

# ໗. ຄັບພິນີວັກ

## ສິກຂາບົດທີ ໖

## ວ່າດ້ວຍການບວດໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໘ ປີ ແຕ່ຍັງບໍ່ໄດ້ສຶກສາສິກຂາ ເລື້ອງພິກຂຸນີຫຼາຍອົງ

[໑໐໙໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍບວດໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໘ ປີຍັງບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີ ຍິງທີ່ບວດເປັນພິກຂຸນີເຫຼົ່ານັ້ນໂງ່ຈ້າ ບໍ່ສະຫຼາດ ບໍ່ຮູ້ສິ່ງທີ່ຄວນ ຫຼື ບໍ່ຄວນ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງບວດໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໘ ປີຍັງບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີບວດໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໘ ປີຍັງບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີຈຶ່ງບວດໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໘ ປີຍັງບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ເມື່ອຊົງຕຳໜິແລ້ວ ຊົງສະແດງທຳມີກະຖາ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີສົງໃຫ້ສິກຂາສົມມຸດ ໃນທຳ ໖ ຂໍ້ເປັນເວລາ ໒ ປີແກ່ຍິງທີ່ມີຄອບຄົວມີອາຍຸຄົບ ໑໘ ປີ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ສິກຂາສົມມຸດແນວນີ້

### ວິທີຂໍສິກຂາສົມມຸດແລະກຳມະວາຈາໃຫ້ສິກຂາສົມມຸດ

ຍິງທີ່ມີຄອບຄົວມີອາຍຸຄົບ ໑໘ ປີນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີທັງຫຼາຍແລ້ວນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ຂ້ານ້ອຍຊື່ນີ້

ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ຂອງແມ່ເຈົ້າຊື່ນີ້ ຂໍ ສິກຂາສົມມຸດໃນທຳ ໖ ຂໍ້ ເປັນເວລາ ໔ ປີ ຕໍ່ສົງ"

ເພິ່ງຂໍແມ່ນຄັ້ງທີ ໔
ເພິ່ງຂໍແມ່ນຄັ້ງທີ ໓
ພິກຂຸນີຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໑໐໙໖] ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີ ອາຍຸຄົບ ໑໔ ປີ ຂອງແມ່ເຈົ້າຊື່ນີ້ ຂໍສິກຂາສົມມຸດໃນທຳ ໖ ຂໍ້ ເປັນເວລາ ໔ ປີ ຕໍ່ສົງ ຖ້າສົງພ້ອມກັນແລ້ວເພິ່ງໃຫ້ສິກຂາສົມມຸດໃນທຳ ໖ ຂໍ້ ເປັນເວລາ ໔ ປີແກ່ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ຂອງແມ່ເຈົ້າຊື່ນີ້ ຂໍສິກຂາສົມມຸດໃນທຳ ໖ ຂໍ້ ເປັນເວລາ ໔ ປີ ຕໍ່ສົງ ສົງໃຫ້ສິກຂາສົມມຸດໃນທຳ ໖ ຂໍ້ ເປັນເວລາ ໔ ປີແກ່ຍິງຊື່ນີ້ເປັນຍິງທີ່ມີຄອບຄົວ ມີອາຍຸຄົບ ໑໔ ປີ ແມ່ເຈົ້າອົງໃດເຫັນດ້ວຍກັບການໃຫ້ສິກຂາສົມມຸດໃນທຳ ໖ ຂໍ້ເປັນ ເວລາ ໔ ປີແກ່ຍິງຊື່ນີ້ເປັນຍິງທີ່ມີຄອບຄົວ ມີອາຍຸຄົບ ໑໔ ປີ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງໂຈດ

ສິກຂາສົມມຸດໃນທຳ ໖ ຂໍ້ ເປັນເວລາ ໔ ປີ ສົງໃຫ້ແລ້ວແກ່ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນ ເປັນມະຕິແນວນີ້"

ພິກຂຸນີຜູ້ສະຫຼາດ ຜູ້ສາມາດເພິ່ງບອກຍິງທີ່ມີຄອບຄົວ ມີອາຍຸຄົບ ໑໔ ປີນັ້ນວ່າ "ທ່ານຈົ່ງກ່າວແນວນີ້ ວ່າ

໑. ເຮົາຂໍສະມາທານງົດເວັ້ນຈາກການຂ້າສັດ ໂດຍບໍ່ລ່ວງລະເມີດຕະຫຼອດ ໔ ປີ ຯລຯ
໖. ເຮົາຂໍສະມາທານງົດເວັ້ນຈາກການບໍຣິໂພກອາຫານໃນເວລາວິການ ໂດຍບໍ່ລ່ວງລະເມີດຕະຫຼອດ ໔ ປີ"

ພຣະຜູ້ມີພຣະພາກເຈົ້າເມື່ອຊົງຕຳໜິພິກຂຸນີເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຕັດ ໂທດແຫ່ງຄວາມເປັນຜູ້ລ້ຽງຍາກ ຯລຯ ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໐໕໗] ກໍ ພິກຂຸນີໃດບວດໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີຍັງບໍ່ໄດ້ ສິກສາສິກຂາ ໃນທຳ ໖ ຂໍ້ຕະຫຼອດ ໔ ປີ ຕ້ອງອາບັດປາຈິດຕີ

## ເລື່ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໐໕໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະ ພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ມີອາຍຸຄົບ ໑໔ ປີ ຄື ມີອາຍຸເຖິງ ໑໔ ປີ

ທີ່ຊື່ວ່າ ຍິງທີ່ມີຄອບຄົວ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຍິງທີ່ເຄີຍຢູ່ຮ່ວມກັບຊາຍ

ຄຳວ່າ ຕະຫຼອດ ໔ ປີ ຄື ສິ້ນ ໔ ປີ

ທີ່ຊື່ວ່າ ຍັງບໍ່ໄດ້ສິກສາສິກຂາ ຄືພິກຂຸນີສົງຍັງບໍ່ໄດ້ໃຫ້ສິກຂາ ຫຼື ໃຫ້ແລ້ວແຕ່ທ່ານ ເຮັດຂາດ

ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໔ ຄັ້ງ ຕ້ອງອາ ບັດທຸກກົດ ໔ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ບົດພາຊະນີ

## ຕິກະປາຈິດຕີ

[໑໐໕໙] ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບວດໃຫ້ ຕ້ອງອາ ບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບວດໃຫ້ ຕ້ອງອາບັດປາຈິດຕີ

### ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບວດໃຫ້ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບວດໃຫ້ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໐໐] ໑. ພິກຂຸນີບວດໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໔ ປີແລ້ວ

໔. ພິກຂຸນີວິ ກົນຈະລິດ

໓. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໖ ຈົບ**

# ໗. ຄັບພິນີວັກ

## ສິກຂາບົດທີ ໗

## ວ່າດ້ວຍການບວດໃຫ້ຍິງທີ່ມີຄອບຄົວເຊິ່ງສົງຍັງບໍ່ໄດ້ສົມມຸດ ເລື້ອງພິກຂຸນີຫຼາຍອົງ

[໑໑໐໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີບວດໃຫ້ຍິງທີ່ມີຄອບຄົວ ມີອາຍຸຄົບ ໑໔ ປີຜູ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໔ ປີແຕ່ສົງຍັງບໍ່ໄດ້ສົມມຸດ ພິກຂຸນີທັງຫຼາຍກ່າວວ່າ “ສິກຂະມານາທັງຫຼາຍ ພວກທ່ານຈົ່ງມານີ້  ຈົ່ງຮູ້ສິ່ງນີ້ ປະເຄນສິ່ງນີ້ ນຳສິ່ງນີ້ມາ ເຮົາຕ້ອງການສິ່ງນີ້ ຈົ່ງເຮັດສິ່ງນີ້ໃຫ້ເປັນກັບປິຍະ”

ສິກຂະມານາເຫຼົ່ານັ້ນຕອບວ່າ “ແມ່ເຈົ້າ ພວກຂ້ານ້ອຍບໍ່ແມ່ນສິກຂະມານາ ພວກຂ້ານ້ອຍເປັນ ພິກຂຸນີ”

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພວກພິກຂຸນີບວດໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີຜູ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໔ ປີແຕ່

ສົງຍັງບໍ່ໄດ້ສົມມຸດນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີບວດໃຫ້ຍິງທີ່ມີຄອບຄົວ ມີອາຍຸຄົບ ໑໘ ປີຜູ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແຕ່ສົງຍັງບໍ່ໄດ້ສົມມຸດ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີຈຶ່ງບວດໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໘ ປີຜູ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແຕ່ສົງຍັງບໍ່ໄດ້ສົມມຸດນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ເມື່ອຊົງຕຳໜິແລ້ວ ຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີສົງ ໃຫ້ວຸດຖານສົມມຸດແກ່ຍິງທີ່ມີຄອບຄົວມີອາຍຸ ໑໘ ປີຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ວຸດຖານສົມມຸດແນວນີ້

## ວິທີຂໍສິກຂາສົມມຸດແລະກຳມະວາຈາໃຫ້ວຸດຖານສົມມຸດ

ຍິງທີ່ມີຄອບຄົວມີອາຍຸຄົບ ໑໘ ປີຜູ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີທັງຫຼາຍ ນັ່ງຢ່ອງຍໍ້ປະນົມມືກ່າວວ່າ "ແມ່ເຈົ້າ ເຮົາຊື່ນີ້ເປັນຍິງທີ່ມີຄອບຄົວຂອງແມ່ເຈົ້າຊື່ນີ້ ມີອາຍຸຄົບ ໑໘ ປີ ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ຂໍວຸດຖານສົມມຸດຕໍ່ສົງ"

ເພິ່ງຂໍແມ່ນຄັ້ງທີ ໒
ເພິ່ງຂໍແມ່ນຄັ້ງທີ ໓
ພິກຂຸນີຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາ ວ່າ

[໑໑໐໒] ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຍິງຊື່ນີ້ເປັນຍິງທີ່ມີຄອບຄົວຂອງແມ່ເຈົ້າຊື່ນີ້ ມີອາຍຸຄົບ ໑໘ ປີ ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ຂໍ ວຸດຖານສົມມຸດຕໍ່ສົງ ຖ້າສົງພ້ອມກັນແລ້ວ ເພິ່ງໃຫ້ວຸດຖານສົມມຸດແກ່ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໘ ປີຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ຍິງຊື່ນີ້ເປັນຍິງທີ່ມີຄອບຄົວຂອງແມ່ເຈົ້າຊື່ນີ້ ມີອາຍຸຄົບ ໑໘ ປີ ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ຂໍວຸດຖານສົມມຸດຕໍ່ສົງ ສົງໃຫ້ວຸດຖານສົມມຸດແກ່ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໘ ປີ ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ແມ່ເຈົ້າອົງໃດເຫັນດ້ວຍກັບການໃຫ້ວຸດຖານສົມມຸດແກ່ຍິງຊື່ນີ້ ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໘ ປີຜູ້ໄດ້ສຶກສາສິກຂາ ໃນທຳ ໖ ຂໍ້ຕະຫຼອດ ໒ ປີ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງໂຈດ

ວຸດຖານສົມມຸດສົງໃຫ້ແກ່ຍິງຊື່ນີ້ ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໘ ປີຜູ້ ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

ພຣະຜູ້ມີພຣະພາກເຈົ້າ ເມື່ອຊົງຕຳໜິພິກຂຸນີເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຕັດໂທດແຫ່ງຄວາມເປັນຜູ້ລ້ຽງຍາກ ຯລຯ ແລ້ວຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໐໓] ກໍ ພິກຂຸນີໃດ ບວດໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໘ ປີຜູ້ໄດ້ສຶກສາ ສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແຕ່ສົງຍັງບໍ່ໄດ້ສົມມຸດ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໑໐໔] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ມີອາຍຸຄົບ ໑໘ ປີ ຄື ມີອາຍຸເຖິງ ໑໘ ປີແລ້ວ

ທີ່ຊື່ວ່າ ຍິງທີ່ມີຄອບຄົວ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຍິງທີ່ເຄີຍຢູ່ຮ່ວມກັບຊາຍ

ຄຳວ່າ ຕະຫຼອດ ໒ ປີ ຄື ສິ້ນ ໒ ປີ

ທີ່ຊື່ວ່າ ຜູ້ສຶກສາສິກຂາ ຄື ໄດ້ສຶກສາໃນທຳ ໖ ຂໍ້ແລ້ວ

ທີ່ຊື່ວ່າ ຍັງບໍ່ໄດ້ສົມມຸດ ຄື ສົງຍັງບໍ່ໄດ້ໃຫ້ການຮັບຮອງການບວດດ້ວຍຍັດຕິທຸຕິຍະກຳ

ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາ

ບັດທຸກກົດ ໔ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ບົດພາຊະນີ

## ຕິກະປາຈິດຕີ

[໑໑໐໔] ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບວດໃຫ້ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບວດໃຫ້ ຕ້ອງອາບັດປາຈິດຕີ

## ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບວດໃຫ້ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບວດໃຫ້ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໐໕] ໑. ພິກຂຸນີບວດໃຫ້ຍິງທີ່ມີຄອບຄົວ ມີອາຍຸຄົບ ໑໔ ປີ ຜູ້ໄດ້ສຶກສາ ສິກຂາໃນທຳ ໖ ຂໍ້ຕະຫຼອດ ໔ ປີ ແລະ ສົງສົມມຸດແລ້ວ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ໗. ຄັບພິນີວັກ

## ສິກຂາບົດທີ ໘

## ວ່າດ້ວຍການບໍ່ອະນຸເຄາະສະຫະຊີວິນີຕະຫຼອດ ໔ ປີ ເລື້ອງພິກຂຸນີຖຸນລະນັນທາ

[໑໑໐໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມ

ຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາບວດໃຫ້ສະຫະຊີວິນີ ແລ້ວບໍ່ອະນຸເຄາະ ທັງບໍ່ໃຫ້ຜູ້ອື່ນອະນຸເຄາະຕະຫຼອດ ໒ ປີ ສະຫະຊີວະນີຜູ້ບວດເປັນພິກຂຸນີເຫຼົ່ານັ້ນເປັນຄົນໂງ່ຈ້າ ບໍ່ສະຫຼາດ ບໍ່ຮູ້ຈັກສິ່ງຄວນ ຫຼື ບໍ່ຄວນ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາບວດໃຫ້ສະຫະຊີວິນີແລ້ວບໍ່ອະນຸເຄາະ ທັງບໍ່ໃຫ້ຜູ້ອື່ນອະນຸເຄາະຕະຫຼອດ ໒ ປີແນວນັ້ນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາບວດໃຫ້ສະຫະຊີວິນີແລ້ວບໍ່ອະນຸເຄາະ ທັງບໍ່ໃຫ້ຜູ້ອື່ນອະນຸເຄາະຕະຫຼອດ ໒ ປີ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພິກຂຸນີຖຸນລະນັນທາບວດໃຫ້ສະຫະຊີວິນີແລ້ວບໍ່ອະນຸເຄາະ ທັງບໍ່ໃຫ້ຜູ້ອື່ນອະນຸເຄາະຕະຫຼອດ ໒ ປີແນວນັ້ນນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໐໘] ກໍ ພິກຂຸນີໃດ ບວດໃຫ້ສະຫະຊີວິນີແລ້ວ ບໍ່ອະນຸເຄາະ ບໍ່ໃຫ້ອະນຸເຄາະຕະຫຼອດ ໒ ປີ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຖຸນລະນັນທາ ຈົບ**

## ສິກຂາບົດວິພັງ

[໑໑໐໙] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ສະຫະຊີວິນີ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງສັດທິວິຫາຣິນີ
ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້
ຄຳວ່າ ຕະຫຼອດ ໒ ປີ ຄື ສິ້ນ ໒ ປີ
ຄຳວ່າ ບໍ່ອະນຸເຄາະ ຄື ບໍ່ອະນຸເຄາະເອງດ້ວຍອຸດເທດ ປະຣິປຸດສາ ໂອວາດອະນຸສາສະນີ
ຄຳວ່າ ບໍ່ໃຫ້ອະນຸເຄາະ ຄື ບໍ່ສັ່ງພິກຂຸນີອື່ນ
ພໍຖືເບົາວ່າ "ຈະບໍ່ອະນຸເຄາະຈະບໍ່ໃຫ້ຜູ້ອື່ນອະນຸເຄາະຕະຫຼອດ ໒ ປີ" ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໑໐] ໑. ພິກຂຸນີ ຜູ້ບໍ່ອະນຸເຄາະໃນເມື່ອມີອັນຕະລາຍ
໒. ພິກຂຸນີ ສະແຫວງຫາແລ້ວແຕ່ບໍ່ໄດ້
໓. ພິກຂຸນີ ຜູ້ເປັນໄຂ້
໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໕. ພິກຂຸນີ ວິກົນຈະລິດ
໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ໗. ຄັບພິນີວັກ

## ສິກຂາບົດທີ ໑

## ວ່າດ້ວຍການບໍ່ຕິດຕາມປະວັດຕິນີຕະຫຼອດ ໒ ປີ

## ເລື້ອງພິກຂຸນີຫຼາຍອົງ

[໑໑໑໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍບໍ່ຕິດຕາມປະວັດຕິນີຜູ້ບວດໃຫ້ຕະຫຼອດ ໒ ປີ ພວກທ່ານເປັນຄົນໂງ່ຈ້າ ບໍ່ສະຫຼາດ ບໍ່ຮູ້ຈັກສິ່ງຄວນ ຫຼື ບໍ່ຄວນ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງບໍ່ຕິດຕາມປະວັດຕິນີຜູ້ບວດໃຫ້ຕະຫຼອດ ໒ ປີນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີບໍ່ຕິດຕາມປະວັດຕິນີ ຜູ້ບວດໃຫ້ຕະຫຼອດ ໒ ປີ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີບໍ່ຕິດຕາມປະວັດຕິນີຜູ້ບວດໃຫ້ຕະຫຼອດ ໒ ປີນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດ ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໑໒] ກໍ ພິກຂຸນີໃດ ບໍ່ຕິດຕາມປະວັດຕິນີ ຜູ້ບວດໃຫ້ຕະຫຼອດ ໒ ປີ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໑໑໓] ຄຳວ່າ ກໍ ฯລฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ฯລฯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ຜູ້ບວດໃຫ້ ຄື ຜູ້ອຸປະສົມບົດໃຫ້

ທີ່ຮຽກວ່າ ປະວັດຕິນີ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງພິກຂຸນີທີ່ເປັນອຸປັດຊາ

ຄຳວ່າ ຕະຫຼອດ ໒ ປີ ຄື ສິ້ນ ໒ ປີ

ຄຳວ່າ ບໍ່ຕິດຕາມ ຄື ບໍ່ອຸປັດຖາກເອງ

ພໍຖືເບົາວ່າ "ຈະບໍ່ຕິດຕາມໄປຕະຫຼອດ ໒ ປີ" ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໑໔] ໑. ພິກຂຸນີ ບໍ່ຕິດຕາມອຸປັດຊາເປັນຄົນຈ້ຳ ຫຼື ມີຄວາມລະອາຍ

໒. ພິກຂຸນີ ຜູ້ເປັນໄຂ້

໓. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໔. ພິກຂຸນີ ວິກົນຈະລິດ
໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ກ. ຄັບພິນີວັກ

## ສິກຂາບົດທີ ໑໐

## ວ່າດ້ວຍການບໍ່ພາສະຫະຊີວິນີຫຼີກໄປ

## ເລື້ອງພິກຂຸນີຖຸນລະນັນທາ

[໑໑໑໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາບວດໃຫ້ສະຫະຊີວິນີ ແລ້ວບໍ່ພາຫຼີກໄປ ທັງບໍ່ໃຫ້ຜູ້ອື່ນພາຫຼີກໄປ ສາມີຈຶ່ງຈັບ (ສະຫະຊີວິນີນັ້ນ)

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາບວດໃຫ້ສະຫະຊີວິນີແລ້ວ ບໍ່ພາຫຼີກໄປ ທັງບໍ່ໃຫ້ຜູ້ອື່ນພາຫຼີກໄປນໍ ສາມີຈຶ່ງຈັບ (ສະຫະຊີວິນີ) ຖ້າພິກຂຸນີນັ້ນເພິ່ງຫຼີກໄປ ສາມີກໍຈັບທ່ານບໍ່ໄດ້" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາບວດໃຫ້ສະຫະຊີວິນີແລ້ວບໍ່ພາຫຼີກໄປ ທັງບໍ່ໃຫ້ຜູ້ອື່ນພາຫຼີກໄປ ສາມີໄດ້ຈັບ (ສະຫະຊີວິນີນັ້ນ) ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາບວດໃຫ້ສະຫະຊີວິນີແລ້ວບໍ່ພາຫຼີກໄປ ທັງບໍ່ໃຫ້ຜູ້ອື່ນພາຫຼີກໄປ ຈົນສາມີຈັບໄດ້ນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໑໖] ກໍ ພິກຂຸນີໃດ ບວດໃຫ້ສະຫະຊີວິນີແລ້ວບໍ່ພາຫຼີກໄປ ບໍ່ໃຫ້ພາຫຼີກໄປ ໂດຍທີ່ສຸດແມ່ນສິ້ນໄລຍະທາງ ໕-໖ ໂຍດ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໑໑໑໗] ຄໍາວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄໍາວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ສະຫະຊີວິນີ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງສັດທິວິຫາຣິນີ

ຄໍາວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ຄໍາວ່າ ບໍ່ພາຫຼີກໄປ ຄື ຕົນເອງບໍ່ພາຫຼີກໄປ

ຄໍາວ່າ ບໍ່ໃຫ້ພາຫຼີກໄປ ຄື ບໍ່ສັ່ງຜູ້ອື່ນ

ພໍຖືເບົາວ່າ “ຈະບໍ່ພາຫຼີກໄປ ທັງຈະບໍ່ໃຫ້ພາຫຼີກໄປແມ່ນສິ້ນໄລຍະທາງ ໕-໖ ໂຍດ” ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໑໘] ໑. ພິກຂຸນີ ບໍ່ຫຼີກໄປໃນເມື່ອມີອັນຕະລາຍ

໒. ພິກຂຸນີ ສະແຫວງຫາແລ້ວແຕ່ບໍ່ໄດ້ພິກຂຸນີເປັນເພື່ອນ

໓. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

### ສິກຂາບົດທີ ໑໐ ຈົບ

### ຄັບພິນີວັກທີ ໗ ຈົບ

# ໗. ກຸມາຣີພູຕະວັກ

## ໝວດວ່າດ້ວຍກຸມາຣີ

## ສິກຂາບົດທີ ໑

### ວ່າດ້ວຍການບວດໃຫ້ກຸມາຣີອາຍຸຕໍ່າກວ່າ ໒໐ ປີ

### ເລື້ອງພິກຂຸນີຫຼາຍອົງ

[໑໑໑໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍບວດໃຫ້ກຸມາຣີອາຍຸຕໍ່າກວ່າ ໒໐ ປີ ກຸມາຣີທີ່ບວດເປັນພິກຂຸນີເຫຼົ່ານັ້ນບໍ່ອົດທົນ ບໍ່ອົດກັ້ນຕໍ່ຄວາມເຢັນ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ສຳຜັດຈາກເຫຼືອດ ຍຸງ ລົມ ແດດ ສັດເລືອຄານ ຄຳກ່າວຮ້າຍ ຄຳທີ່ຟັງແລ້ວບໍ່ດີ ຄວາມຮູ້ສຶກທາງກາຍທີ່ເກີດຂຶ້ນເປັນທຸກ ແສນສາຫັດ ຮຸນແຮງ ເຜັດຮ້ອນ ທີ່ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ແທບຈະພາກຊີວິດ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພວກພິກຂຸນີບວດໃຫ້ກຸມາຣີອາຍຸຕໍ່າກວ່າ ໒໐ ປີນໍ” ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຣັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີບວດໃຫ້ກຸມາຣີອາຍຸ ຕໍ່າກວ່າ ໒໐ ປີ ແມ່ນບໍ?” ພິກຂຸທັງຫຼາຍທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງບວດໃຫ້ກຸມາຣີ ອາຍຸຕໍ່າກວ່າ ໒໐ ປີນໍ ຍ້ອນກຸມາຣີອາຍຸຕໍ່າກວ່າ ໒໐ ປີຍັງບໍ່ອົດທົນ ບໍ່ອົດກັ້ນຕໍ່ຄວາມເຢັນ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ສຳຜັດຈາກເຫຼືອດ ຍຸງ ລົມ ແດດ ສັດເລືອຄານ ຄຳກ່າວຮ້າຍ ຄຳທີ່ຟັງແລ້ວບໍ່ດີ ຄວາມຮູ້ສຶກທາງກາຍທີ່ເກີດຂຶ້ນ ເປັນທຸກ ແສນສາຫັດ ຮຸນແຮງ ເຜັດຮ້ອນ ທີ່ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ແທບຈະພາກຊີວິດ ສ່ວນຍິງສາວທີ່ມີອາຍຸຄົບ ໒໐ ປີຍ່ອມອົດທົນຕໍ່ຄວາມເຢັນ ຄວາມຮ້ອນ ຯລຯ ແທບ ຈະພາກຊີວິດ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່

ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີ ທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໔໐] ກໍ ພິກຂຸນີໃດ ບວດໃຫ້ກຸມາຣີມີອາຍຸຕ່ຳກວ່າ ໔໐ ປີ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໑໔໑] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ມີອາຍຸຕ່ຳກວ່າ ໔໐ ປີ ຄື ມີອາຍຸຍັງບໍ່ເຖິງ ໔໐ ປີ

ທີ່ຊື່ວ່າ ກຸມາຣີ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງສາມະເນຣີ

ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດປາຈິດຕີ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໔ ຄັ້ງ ຕ້ອງອາບັດທຸກກົດ ໔ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ບົດພາຊະນີ

[໑໑໔໔] ກຸມາຣີອາຍຸຕ່ຳກວ່າ ໔໐ ປີ ພິກຂຸນີສຳຄັນວ່າອາຍຸຕ່ຳ ໔໐ ປີ ບວດໃຫ້ ຕ້ອງອາບັດປາຈິດຕີ

ກຸມາຣີອາຍຸຕ່ຳກວ່າ ໔໐ ປີ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ

ກຸມາຣີອາຍຸຕ່ຳກວ່າ ໔໐ ປີ ພິກຂຸນີສຳຄັນວ່າຄົບ ບວດໃຫ້ ບໍ່ຕ້ອງອາບັດ

ກຸມາຣີອາຍຸຄົບ ໔໐ ປີ ພິກຂຸນີສຳຄັນວ່າອາຍຸຕ່ຳກວ່າ ໔໐ ປີ ບວດໃຫ້ ຕ້ອງອາບັດທຸກກົດ

ກຸມາຣີອາຍຸຄົບ ໔໐ ປີ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ

ກຸມາຣີອາຍຸຄົບ ໔໐ ປີ ພິກຂຸສຳຄັນວ່າອາຍຸຄົບ ໔໐ ປີ ບວດໃຫ້ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໔໖] ໑. ກຸມາຣີອາຍຸຕ່ຳກວ່າ ໒໐ ປີ ພິກຂຸນີສຳຄັນວ່າອາຍຸຄົບ ໒໐ ປີ ຈຶ່ງບວດໃຫ້
໒. ກຸມາຣີອາຍຸຄົບ ໒໐ ປີ ພິກຂຸນີສຳຄັນວ່າອາຍຸຄົບ ໒໐ ປີ ຈຶ່ງບວດໃຫ້
໓. ພິກຂຸນີ ວິກົນຈະລິດ
໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑ ຈົບ**

# ໙. ກຸມາຣີພູຕະວັກ

## ສິກຂາບົດທີ ໒

## ວ່າດ້ວຍການບວດໃຫ້ກຸມາຣີທີ່ຍັງບໍ່ໄດ້ສຶກສາໃນທຳ ໖ ຂໍ້ ເລື້ອງພິກຂຸນີຫຼາຍອົງ

[໑໑໔໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍບວດໃຫ້ກຸມາຣີມີອາຍຸຄົບ ໒໐ ປີແຕ່ຍັງບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີ ພວກທ່ານໂງ່ຈ້າ ບໍ່ສະຫຼາດ ບໍ່ຮູ້ສິ່ງທີ່ຄວນ ຫຼື ບໍ່ຄວນ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງບວດໃຫ້ກຸມາຣີອາຍຸຄົບ ໒໐ ປີແຕ່ຍັງບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີແນວນັ້ນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີບວດໃຫ້ກຸມາຣີອາຍຸ ຄົບ ໒໐ ປີແຕ່ຍັງບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີຈຶ່ງບວດໃຫ້ກຸມາຣີອາຍຸຄົບ ໒໐ ປີແຕ່ຍັງບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒

ປີນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດ ໃຫ້ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ເມື່ອຕຳໜິແລ້ວ ຊົງສະແດງທຳມີກະຖາ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີສົງໃຫ້ສິກຂາສົມມຸດໃນທຳ ໖ ຂໍ້ ເປັນເວລາ ໒ ປີແກ່ກຸມາຣີອາຍຸ ໑໘ ປີ

ພິກຂຸທັງຫຼາຍ ພິກຂຸນີເພິ່ງໃຫ້ສິກຂາສົມມຸດແບບນີ້

## ວິທີຂໍສິກຂາສົມມຸດ ແລະ ກຳມະວາຈາໃຫ້ສິກຂາສົມມຸດ

ກຸມາຣີອາຍຸ ໑໘ ປີນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບ ຕີນພິກຂຸນີທັງຫຼາຍແລ້ວ ນັ່ງຢ່ອງຢໍ້ ປະນົມມື ກ່າວແບບນີ້ວ່າ "ແມ່ເຈົ້າ ຂ້ານ້ອຍຊື່ນີ້ ເປັນກຸມາຣີຂອງແມ່ເຈົ້າຊື່ນີ້ມີອາຍຸ ໑໘ ປີ ຂໍສິກຂາສົມມຸດໃນທຳ ໖ ຂໍ້ເປັນເວລາ ໒ ປີ ຕໍ່ສົງ"

ເພິ່ງຂໍແມ່ນຄັ້ງທີ ໒
ເພິ່ງຂໍແມ່ນຄັ້ງທີ ໓
ພິກຂຸນີຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາ ວ່າ

[໑໑໒໕] ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ກຸມາຣີຊື່ນີ້ຂອງແມ່ເຈົ້າຊື່ນີ້ມີອາຍຸ ໑໘ ປີ ຂໍສິກຂາສົມມຸດໃນທຳ ໖ ຂໍ້ເປັນເວລາ ໒ ປີ ຕໍ່ສົງ ຖ້າສົງພ້ອມແລ້ວ ເພິ່ງໃຫ້ສິກຂາສົມມຸດໃນທຳ ໖ ຂໍ້ເປັນເວລາ ໒ ປີແກ່ຍິງສາວຜູ້ມີອາຍຸ ໑໘ ປີ ນີ້ ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ກຸມາຣີນີ້ຊື່ນີ້ຂອງແມ່ເຈົ້າຊື່ນີ້ມີອາຍຸ ໑໘ ປີ ຂໍສິກຂາສົມມຸດໃນທຳ ໖ ຂໍ້ເປັນເວລາ ໒ ປີ ຕໍ່ສົງ ສົງໃຫ້ສິກຂາສົມມຸດໃນທຳ ໖ ຂໍ້ ເປັນເວລາ ໒ ປີແກ່ກຸມາຣີຊື່ນີ້ມີອາຍຸ ໑໘ ປີ ແມ່ເຈົ້າອົງໃດເຫັນດ້ວຍກັບການໃຫ້ສິກຂາສົມມຸດໃນທຳ ໖ ຂໍ້ເປັນເວລາ ໒ ປີ ແກ່ກຸມາຣີຊື່ນີ້ມີອາຍຸ ໑໘ ປີ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງໂຈດ

ສິກຂາສົມມຸດໃນທຳ ໖ ຂໍ້ເປັນເວລາ ໒ ປີ ສົງໃຫ້ແລ້ວແກ່ກຸມາຣີຊື່ນີ້ມີອາຍຸ ໑໘ ປີ ສົງເຫັນດ້ວຍ ຍ້ອນແບບນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບບນີ້"

ເພິ່ງບອກກຸມາຣີມີອາຍຸ ໑໘ ປີ ນັ້ນວ່າ "ທ່ານຈົ່ງກ່າວແບບນີ້ ວ່າ

໑. ເຮົາຂໍສະມາທານງົດເວັ້ນຈາກການຂ້າສັດ ໂດຍບໍ່ລ່ວງລະເມີດຕະຫຼອດ ໒ ປີ ຯລຯ
໖. ເຮົາຂໍສະມາທານງົດເວັ້ນຈາກການບໍຣິໂພກອາຫານໃນເວລາວິການ ໂດຍບໍ່ລ່ວງລະເມີດຕະຫຼອດ ໒ ປີ"

ພຣະຜູ້ມີພຣະພາກເຈົ້າເມື່ອຊົງຕຳໜິພິກຂຸນີເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຕັດ ໂທດແຫ່ງຄວາມເປັນຜູ້ລ້ຽງຍາກ ຯລຯ ແລ້ວຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໔໖] ກໍ ພິກຂຸນີໃດ ບວດໃຫ້ກຸມາຣີຜູ້ມີອາຍຸຄົບ ໒໐ ປີ ຜູ້ຍັງບໍ່ໄດ້ສຶກສາສິກຂາ ໃນທຳ ໖ ຂໍ້ຕະຫຼອດ ໒ ປີ ຕ້ອງອາບັດປາຈິດຕີ

### ເລື່ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໑໔໗] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ອາຍຸຄົບ ໒໐ ປີ ຄື ມີອາຍຸເຖິງ ໒໐ ປີ

ທີ່ຊື່ວ່າ ກຸມາຣີ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງສາມະເນຣີ

ຄຳວ່າ ຕະຫຼອດ ໒ ປີ ຄື ສິ້ນ ໒ ປີ

ທີ່ຊື່ວ່າ ຜູ້ຍັງບໍ່ໄດ້ສຶກສາສິກຂາ ຄື ພິກຂຸນີສົງຍັງບໍ່ໄດ້ໃຫ້ສິກຂາ ຫຼື ໃຫ້ແລ້ວແຕ່ທ່ານເຮັດຂາດ

ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ພິກຂຸນີຕັ້ງໃຈວ່າ “ຈະບວດໃຫ້” ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດທຸກກົດ ໒ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ບົດພາຊະນີ

## ຕິກະປາຈິດຕີ

[໑໑໔໘] ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າ ເປັນກຳທີ່ເຮັດຖືກຕ້ອງ ບວດໃຫ້ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບວດໃຫ້ຕ້ອງອາບັດປາຈິດຕີ

## ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບວດໃຫ້ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ
ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບວດໃຫ້ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໔໙] ໑. ພິກຂຸນີ ບວດໃຫ້ກຸມາຣີອາຍຸຄົບ ໔໐ ປີ ຜູ້ສຶກສາທຳ ໖ ຂໍ້ຕະຫຼອດ ໔ ປີ
໔. ພິກຂຸນີ ວິກົນຈະລິດ
໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

# ໗. ກຸມາຣີພູຕະວັກ

## ສິກຂາບົດທີ ໑

## ວ່າດ້ວຍການບວດໃຫ້ກຸມາຣີທີ່ສົງຍັງບໍ່ໄດ້ສົມມຸດ

## ເລື້ອງພິກຂຸນີຫຼາຍອົງ

[໑໑໑໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍບວດໃຫ້ກຸມາຣີມີອາຍຸຄົບ ໒໐ ປີຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີ ແຕ່ສົງຍັງບໍ່ໄດ້ສົມມຸດ ພິກຂຸນີທັງຫຼາຍກ່າວວ່າ "ສິກຂະມານາທັງຫຼາຍ ພວກທ່ານຈົ່ງມານີ້ ຈົ່ງຮູ້ສິ່ງນີ້ ປະເຄນສິ່ງນີ້ ນຳສິ່ງນີ້ມາ ເຮົາຕ້ອງການສິ່ງນີ້ ຈົ່ງເຮັດສິ່ງນີ້ໃຫ້ເປັນກັບປິຍະ"

ກຸມາຣີເຫຼົ່ານັ້ນກ່າວວ່າ "ແມ່ເຈົ້າ ພວກຂ້ານ້ອຍບໍ່ແມ່ນສິກຂະມານາ ພວກຂ້ານ້ອຍເປັນພິກຂຸນີ"

ບັນດາພິກຂຸນີຜູ້ມັກໜ້ອຍ ។ລ។ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງບວດໃຫ້ກຸມາຣີມີອາຍຸຄົບ ໒໐ ປີ ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີ ແຕ່ສົງຍັງບໍ່ໄດ້ສົມມຸດນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີບວດໃຫ້ກຸມາຣີມີອາຍຸ ຄົບ ໒໐ ປີ ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີ ແຕ່ສົງຍັງບໍ່ໄດ້ສົມມຸດ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "។ລ។ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງບວດໃຫ້ກຸມາຣີມີອາຍຸຄົບ ໒໐ ປີ ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີ ແຕ່ສົງຍັງບໍ່ໄດ້ສົມມຸດນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ។ລ។" ເມື່ອຕຳໜິແລ້ວ ຊົງສະແດງທຳມີກະຖາ ແລ້ວຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີສົງໃຫ້ວຸດຖານສົມມຸດແກ່ກຸມາຣີມີອາຍຸ ໒໐ ປີ ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ວຸດຖານສົມມຸດແບບນີ້

## ວິທີໃຫ້ວຸດຖານສົມມຸດ ແລະ ກຳມະວາຈາໃຫ້ວຸດຖານສົມມຸດ

ກຸມາຣີມີອາຍຸ ໑໐ ປີ ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີ ແລ້ວນັ້ນເພິ່ງ ເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸນີທັງຫຼາຍແລ້ວນັ່ງຍ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ແມ່ເຈົ້າ ຂ້ານ້ອຍຊື່ນີ້ເປັນກຸມາຣີຂອງແມ່ເຈົ້າຊື່ນີ້ ມີອາຍຸຄົບ ໑໐ ປີ ໄດ້ສຶກສາໃນທຳ ໖ ຂໍ້ຕະຫຼອດ ໒ ປີ ແລ້ວ ຂໍວຸດຖານສົມມຸດຕໍ່ສົງ"

ເພິ່ງຂໍແມ່ນຄັ້ງທີ ໒
ເພິ່ງຂໍແມ່ນຄັ້ງທີ ໓
ພິກຂຸນີຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໑໑໓໑] ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ກຸມາຣີຊື່ນີ້ຂອງແມ່ເຈົ້າຊື່ນີ້ມີອາຍຸຄົບ ໑໐ ປີ ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີ ຂໍວຸດຖານສົມມຸດຕໍ່ສົງ ຖ້າສົງ ພ້ອມແລ້ວເພິ່ງໃຫ້ວຸດຖານສົມມຸດແກ່ກຸມາຣີຊື່ນີ້ຜູ້ມີອາຍຸຄົບ ໑໐ ປີຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີ ນີ້ ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ກຸມາຣີຊື່ນີ້ຂອງແມ່ເຈົ້າຊື່ນີ້ມີອາຍຸຄົບ ໑໐ ປີ ໄດ້ສຶກສາສິກຂາໃນທຳ ໖ ຂໍ້ຕະຫຼອດ ໒ ປີແລ້ວ ຂໍວຸດຖານສົມມຸດຕໍ່ສົງ ສົງໃຫ້ວຸດຖານສົມມຸດແກ່ກຸມາຣີຊື່ນີ້ຜູ້ມີອາຍຸຄົບ ໑໐ ປີ ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີແລ້ວ ແມ່ເຈົ້າອົງໃດເຫັນດ້ວຍກັບການໃຫ້ວຸດຖານສົມມຸດແກ່ກຸມາຣີຊື່ນີ້ຜູ້ມີອາຍຸຄົບ ໑໐ ປີ ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີ ແລ້ວ ແມ່ເຈົ້າອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງໂຈດ

ວຸດຖານສົມມຸດສົງໃຫ້ແລ້ວແກ່ກຸມາຣີຊື່ນີ້ມີອາຍຸຄົບ ໑໐ ປີ ຜູ້ໄດ້ສຶກສາສິກຂາໃນ ທຳ ໖ ຂໍ້ ຕະຫຼອດ ໒ ປີແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

ພຣະຜູ້ມີພຣະພາກເຈົ້າ ເມື່ອຊົງຕຳໜິພິກຂຸນີເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຕັດໂທດແຫ່ງຄວາມເປັນຜູ້ລ້ຽງຍາກ ຯລຯ ແລ້ວຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໑໑໓໒] ກໍ ພິກຂຸນີໃດ ບວດໃຫ້ກຸມາຣີມີອາຍຸຄົບ ໑໐ ປີ ຜູ້ໄດ້ສຶກສາສິກຂາໃນ ທຳ ໖ ຂໍ້ ຕະຫຼອດ ໒ ປີແລ້ວ ແຕ່ສົງຍັງບໍ່ໄດ້ສົມມຸດ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຫຼາຍອົງ ຈົບ**

## ສິກຂາບົດວິພັງ

[໑໑໓໓] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ມີອາຍຸຄົບ ໔໐ ປີ ຄື ມີອາຍຸເຖິງ ໔໐ ປີ

ທີ່ຊື່ວ່າ ກຸມາຣີ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງສາມະເນຣີ

ຄຳວ່າ ຕະຫຼອດ ໔ ປີ ຄື ສິ້ນ ໔ ປີ

ທີ່ຊື່ວ່າ ຜູ້ໄດ້ສຶກສາສິກຂາ ຄື ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ແລ້ວ

ທີ່ຊື່ວ່າ ສົງຍັງບໍ່ໄດ້ສົມມຸດ ຄື ສົງຍັງບໍ່ໄດ້ໃຫ້ວຸດຖານສົມມຸດດ້ວຍຍັດຕິທຸຕິຍະກຳ

ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໔ ຄັ້ງ ຕ້ອງອາບັດທຸກກົດ ໔ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕິ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ບົດພາຊະນີ

### ຕິກະປາຈິດຕີ

[໑໑໓໔] ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບວດໃຫ້ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບວດໃຫ້ຕ້ອງອາບັດປາຈິດຕີ

### ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບວດໃຫ້ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບວດໃຫ້ຕ້ອງອາບັດທຸກກົດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໓໔] ໑. ພິກຂຸນີ ບວດໃຫ້ກຸມາຣີອາຍຸຄົບ ໒໐ ປີ ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີ ທີ່ສົງສົມມຸດແລ້ວ

໒. ພິກຂຸນີ ວິກົນຈະລິດ

໓. ພິກຂຸນີ ຕົ້ນບັນຍັດ

**ສິກຂາບທີ ໓ ຈົບ**

# ໘. ກຸມາຣີພູຕະວັກ

## ສິກຂາບົດທີ ໔

## ວ່າດ້ວຍພິກຂຸນີມີພັນສາຕ່ຳກວ່າ ໑໒ ເປັນປະວັດຕິນີ

### ເລື້ອງພິກຂຸນີຫຼາຍອົງ

[໑໑໓໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍ ມີພັນສາຕ່ຳກວ່າ ໑໒ ບວດໃຫ້ກຸນລະທິດາ ພວກທ່ານເປັນຜູ້ໂງ່ຈ້າ ບໍ່ສະຫຼາດ ບໍ່ຮູ້ສິ່ງທີ່ຄວນ ຫຼື ບໍ່ຄວນ ແມ່ນພວກສັດທິວິຫາຣີນີກໍເປັນຜູ້ໂງ່ຈ້າ ບໍ່ສະຫຼາດ ບໍ່ຮູ້ສິ່ງທີ່ຄວນ ຫຼື ບໍ່ຄວນ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີມີພັນສາຕ່ຳກວ່າ ໑໒ ຈຶ່ງບວດໃຫ້ກຸນລະທິດານໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີມີພັນສາຕ່ຳກວ່າ ໑໒ ບວດໃຫ້ກຸນລະທິດາ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີມີພັນສາຕ່ຳກວ່າ ໑໒ ຈຶ່ງບວດໃຫ້

ກຸນລະທິດານໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໓໗] ກໍ ພິກຂຸນີໃດ ມີພັນສາຕ່ຳກວ່າ ໑໒ ບວດໃຫ້ກຸນລະທິດາ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຫຼາຍອົງ ຈົບ**

## ສິກຂາບົດວິພັງ

[໑໑໓໘] ຄຳວ່າ ກໍ ฯລฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ฯລฯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ມີພັນສາຕ່ຳກວ່າ ໑໒ ຄື ພັນສາຍັງບໍ່ເຖິງ ໑໒

ຄຳວ່າ ບວດໃຫ້ກຸນລະທິດາ ຄື ອຸປະສົມບົດໃຫ້ກຸນລະທິດາ

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດທຸກກົດ ໒ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໓໙] ໑. ພິກຂຸນີ ມີພັນສາຄົບ ໑໒ ບວດໃຫ້ກຸນລະທິດາ

໒. ພິກຂຸນີ ວິກົນຈະລິດ

໓. ພິກຂຸນີ ຕົ້ນບັນຍັດ

**ສິກຂາບທີ ໒ ຈົບ**

# ໗. ກຸມາຣີພູຕະວັກ

## ສິກຂາບົດທີ ໕

## ວ່າດ້ວຍພິກຂຸນີມີພັນສາຄົບ ໑໘ ເປັນປະວັດຕິນີແຕ່ສົງຍັງບໍ່ໄດ້ສົມມຸດ

## ເລື້ອງພິກຂຸນີຫຼາຍອົງ

[໑໑໔໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍມີພັນສາຄົບ ໑໘ ແລ້ວແຕ່ສົງຍັງບໍ່ໄດ້ສົມມຸດບວດໃຫ້ກຸນລະທິດາ ພວກທ່ານເປັນຜູ້ໂງ່ຈ້າ ບໍ່ສະຫຼາດ ບໍ່ຮູ້ສິ່ງທີ່ຄວນ ຫຼື ບໍ່ຄວນ ແມ່ນສັດທິວິຫາຣີນີກໍເປັນຜູ້ໂງ່ຈ້າ ບໍ່ສະຫຼາດ ບໍ່ຮູ້ສິ່ງທີ່ຄວນ ຫຼື ບໍ່ຄວນ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພວກພິກຂຸນີມີພັນສາຄົບ ໑໘ ແລ້ວແຕ່ສົງຍັງບໍ່ໄດ້ສົມມຸດຈຶ່ງບວດໃຫ້ກຸນລະທິດານໍ” ເມື່ອແລ້ວພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີມີພັນສາຄົບ ໑໘ ແລ້ວແຕ່ສົງຍັງບໍ່ໄດ້ສົມມຸດບວດໃຫ້ກຸນລະທິດາ ແມ່ນບໍ?” ພິກຂຸທັງຫຼາຍທູນຮັບວ່າ “ແມ່ນ ຂ້ານ້ອຍ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີມີພັນສາຄົບ ໑໘ ແຕ່ສົງຍັງບໍ່ໄດ້ສົມມຸດ ຈຶ່ງບວດໃຫ້ກຸນລະທິດານໍ ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ເມື່ອຊົງຕຳໜິແລ້ວໄດ້ຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດວຸດຖາປະນະສົມມຸດແກ່ພິກຂຸນີຜູ້ມີພັນສາຄົບ ໑໘ ແລ້ວ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ວຸດຖາປະນະສົມມຸດແນວນີ້

### ວິທີຂໍວຸດຖາປະນະສົມມຸດ ແລະ ກຳມະວາຈາໃຫ້ວຸດຖາປະນະສົມມຸດ

ພິກຂຸນີຜູ້ມີພັນສາຄົບ ໑໘ ນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງ ໜຶ່ງຂາບຕີນພິກຂຸນີຜູ້ແກ່ພັນສາແລ້ວນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ “ແມ່ເຈົ້າ ຂ້ານ້ອຍມີຊື່ນີ້ມີພັນສາຄົບ ໑໘ ແລ້ວ ຂໍວຸດຖາປະນະສົມມຸດຕໍ່ສົງ”

ເພິ່ງຂໍແມ່ນຄັ້ງທີ ໔

ເພິ່ງຂໍແມ່ນຄັ້ງທີ ໓

ພິກຂຸນີນັ້ນສົງເພິ່ງກຳນົດໄດ້ວ່າ "ພິກຂຸນີນີ້ເປັນຄົນສະຫຼາດ ມີຄວາມລະອາຍ" ຖ້າທ່ານຈົ໋າ ບໍ່ມີຄວາມລະອາຍ ກໍບໍ່ຄວນໃຫ້ວຸດຖາປະນະສົມມຸດ ຖ້າທ່ານຈົ໋າແຕ່ມີຄວາມລະອາຍ ກໍບໍ່ຄວນໃຫ້ ຖ້າເປັນຄົນສະຫຼາດແຕ່ບໍ່ມີຄວາມລະອາຍກໍບໍ່ຄວນໃຫ້ ແຕ່ຖ້າເປັນທັງຄົນສະຫຼາດແລະມີຄວາມລະອາຍຈຶ່ງຄວນໃຫ້

ພິກຂຸທັງຫຼາຍ ສົງເພິ່ງໃຫ້ວຸດຖາປະນະສົມມຸດແບວນີ້

ພິກຂຸນີຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາ ວ່າ

[໑໑໔໑] ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸນີນີ້ມີພັນສາຄົບ ໑໔ ແລ້ວ ຂໍວຸດຖາປະນະສົມມຸດຕໍ່ສົງ ຖ້າສົງພ້ອມແລ້ວເພິ່ງໃຫ້ວຸດຖາປະນະສົມມຸດແກ່ພິກຂຸນີຊື່ນີ້ຜູ້ມີພັນສາຄົບ ໑໔ ແລ້ວ ນີ້ເປັນຍັດຕິ

ແມ່ເຈົ້າ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸນີນີ້ມີພັນສາຄົບ ໑໔ ແລ້ວຂໍວຸດຖາປະນະສົມມຸດຕໍ່ສົງ ສົງໃຫ້ວຸດຖາປະນະສົມມຸດແກ່ພິກຂຸນີຊື່ນີ້ຜູ້ມີພັນສາຄົບ ໑໔ ແລ້ວ ແມ່ເຈົ້າອົງໃດເຫັນດ້ວຍກັບການໃຫ້ວຸດຖາປະນະສົມມຸດແກ່ພິກຂຸນີຊື່ນີ້ຜູ້ມີພັນສາຄົບ ໑໔ ແລ້ວ ແມ່ເຈົ້າ ອົງນັ້ນເພິ່ງນິ່ງ ແມ່ເຈົ້າອົງໃດບໍ່ເຫັນດ້ວຍ ແມ່ເຈົ້າອົງນັ້ນເພິ່ງໂຈດ

ວຸດຖາປະນະສົມມຸດສົງໃຫ້ແລ້ວແກ່ພິກຂຸນີຊື່ນີ້ ຜູ້ມີພັນສາຄົບ ໑໔ ແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບວນີ້"

ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງຕຳໜິພິກຂຸນີເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໔໔] ກໍ ພິກຂຸນີໃດ ມີພັນສາຄົບ ໑໔ ແລ້ວແຕ່ສົງຍັງບໍ່ໄດ້ສົມມຸດ ບວດໃຫ້ກຸນລະທິດາ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໑໔໓] ຄຳວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໆລໆ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ມີພັນສາຄົບ ໑໘ ແລ້ວ ຄື ມີພັນສາເຖິງ ໑໘

ທີ່ຊື່ວ່າ ຍັງບໍ່ໄດ້ສົມມຸດ ຄື ສົງຍັງບໍ່ໄດ້ໃຫ້ວຸດຖາປະນະສົມມຸດດ້ວຍຍັດຕິທຸຕິຍະກຳມະວາຈາ

ຄຳວ່າ ບວດໃຫ້ກຸນລະທິດາ ຄື ອຸປະສົມບົດໃຫ້ກຸນລະທິດາ

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໔ ຄັ້ງ ຕ້ອງອາບັດທຸກກົດ ໔ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ບົດພາຊະນີ

## ຕິກະປາຈິດຕີ

[໑໑໘໔] ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບວດໃຫ້ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດປາຈິດຕີ

ກຳທີ່ເຮັດຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບວດໃຫ້ຕ້ອງອາບັດປາຈິດຕີ

## ຕິກະທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດຖືກຕ້ອງ ບວດໃຫ້ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີບໍ່ແນ່ໃຈ ບວດໃຫ້ ຕ້ອງອາບັດທຸກກົດ

ກຳທີ່ເຮັດບໍ່ຖືກຕ້ອງ ພິກຂຸນີສຳຄັນວ່າເປັນກຳທີ່ເຮັດບໍ່ຖືກຕ້ອງ ບວດໃຫ້ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໘໕] ໑. ພິກຂຸນີ ມີພັນສາຄົບ ໑໘ ແລ້ວ ແລະສົງສົມມຸດແລ້ວ ຈຶ່ງບວດໃຫ້ກຸນລະທິດາ

໔. ພິກຂຸນີ ວິກົນຈະລິດ

໓. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໕ ຈົບ**

# ໗. ກຸມາຣີພູຕະວັກ

## ສິກຂາບົດທີ ໖

### ວ່າດ້ວຍການຈົ່ມວ່າພາຍຫຼັງ

### ເລື້ອງພິກຂຸນີຈັນທະກາລີ

[໑໑໒໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຈັນທະກາລີເຂົ້າໄປຫາພິກຂຸນີສົງ ຂໍວຸດຖາປະນະສົມມຸດ ລຳດັບນັ້ນ ພິກຂຸນີສົງກຳນົດພິຈາລະນາທ່ານໃນຂະນະນັ້ນແລ້ວບໍ່ຍອມໃຫ້ວຸດຖາປະນະສົມມຸດ ດ້ວຍກ່າວວ່າ "ແມ່ເຈົ້າ ທ່ານຢ່າບວດໃຫ້ກຸນລະທິດາເລີຍ" ພິກຂຸນີຈັນທະກາລີກໍຮັບຄຳຂອງສົງ

ເມື່ອຕໍ່ມາ ພິກຂຸນີສົງໃຫ້ວຸດຖາປະນະສົມມຸດແກ່ພິກຂຸນີເຫຼົ່າອື່ນ ພິກຂຸນີຈັນທະກາລີຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເຮົາເທົ່ານັ້ນເປັນຄົນຈ໊າ ເຮົາເທົ່ານັ້ນບໍ່ມີຄວາມລະອາຍ ທີ່ເຮັດໃຫ້ສົງໃຫ້ວຸດຖາປະນະສົມມຸດແກ່ພິກຂຸນີເຫຼົ່າອື່ນ ບໍ່ໃຫ້ ແກ່ເຮົາເທົ່ານັ້ນ"

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຈັນທະກາລີອັນສົງກ່າວຢູ່ວ່າ ແມ່ເຈົ້າ ທ່ານຢ່າບວດໃຫ້ກຸນລະທິດາເລີຍ ຮັບຄຳແລ້ວພາຍຫຼັງກັບຈົ່ມວ່ານໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍ ໃຫ້ຮູ້ພວກພິກຂຸໄດ້ນຳເລື້ອງນີ້ ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຈັນທະກາລີອັນສົງກ່າວຢູ່ວ່າ ແມ່ເຈົ້າ ທ່ານຢ່າບວດໃຫ້ກຸນລະທິດາເລີຍ" ຮັບຄຳແລ້ວ ພາຍຫຼັງກັບຈົ່ມວ່າ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈັນທະກາລີອັນສົງກ່າວຢູ່ວ່າ ແມ່ເຈົ້າ ທ່ານຢ່າບວດໃຫ້ກຸນລະທິດານີ້ເລີຍ ຮັບຄຳແລ້ວ ແຕ່ພາຍຫຼັງກັບຈົ່ມວ່ານໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໔໗] ກໍ ພິກຂຸນີໃດ ອັນສິງກ່າວຢູ່ວ່າ "ແມ່ເຈົ້າ ທ່ານຢ່າບວດໃຫ້ກຸນລະທິດານີ້ເລີຍ" ຮັບຄໍາແລ້ວ ແຕ່ພາຍຫຼັງກັບຈົ່ມວ່າ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຈັນທະກາລີ ຈົບ

## ສິກຂາບົດວິພັງ

[໑໑໔໘] ຄໍາວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໆລໆ ໃດ

ຄໍາວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີໃນຄວາມໝາຍນີ້

ຄໍາວ່າ ແມ່ເຈົ້າ ທ່ານຢ່າບວດໃຫ້ກຸນລະທິດາເລີຍ ຄວາມວ່າ ແມ່ເຈົ້າ ທ່ານຢ່າໃຫ້ກຸນລະທິດາ ອຸປະສົມບົດເລີຍ ທ່ານຮັບຄໍາແລ້ວ ພາຍຫຼັງກັບຈົ່ມວ່າ ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໔໙] ໑. ພິກຂຸນີ ຜູ້ຈົ່ມວ່າພິກຂຸນີສົງທີ່ມັກກະທໍາໄປດ້ວຍຄວາມຮັກ ດ້ວຍຄວາມຊັງ ດ້ວຍຄວາມຫຼົງ ດ້ວຍຄວາມຢ້ານ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

### ສິກຂາບົດທີ ໖ ຈົບ

# ໗. ກຸມາຣິພູຕະວັກ

## ສິກຂາບົດທີ ໗

## ວ່າດ້ວຍການບອກສິກຂະມານາໃຫ້ຖວາຍຈີວອນແລ້ວບໍ່ບວດໃຫ້

### ເລື້ອງພິກຂຸນີຖຸນລະນັນທາ

[໑໑໕໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ສິກຂະມານາອົງໜຶ່ງເຂົ້າໄປຫາພິກຂຸນີຖຸນລະນັນທາ ຂໍອຸປະສົມບົດ

ພິກຂຸນີຖຸນລະນັນທາກ່າວກັບສິກຂະມານານັ້ນວ່າ "ແມ່ເຈົ້າ ຖ້າທ່ານຈັກໃຫ້ຈີວອນແກ່ເຮົາ ເມື່ອເປັນແນວນີ້ ເຮົາກໍຈະບວດໃຫ້ທ່ານ" ແລ້ວບໍ່ບວດໃຫ້ ບໍ່ຂວນຂວາຍໃຊ້ໃຫ້ບວດໃຫ້ ລຳດັບນັ້ນ ສິກຂະມານານັ້ນຈຶ່ງບອກເລື່ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງກ່າວກັບສິກຂະມານາວ່າ "ແມ່ເຈົ້າ ຖ້າທ່ານຈັກໃຫ້ຈີວອນແກ່ເຮົາ ເມື່ອເປັນແນວນີ້ ເຮົາກໍຈະບວດໃຫ້ທ່ານ ແລ້ວບໍ່ບວດໃຫ້ ບໍ່ຂວນຂວາຍເພື່ອບວດໃຫ້ນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາກ່າວກັບ ສິກຂະມານາວ່າ ແມ່ເຈົ້າ ຖ້າທ່ານຈັກໃຫ້ຈີວອນແກ່ເຮົາ ເມື່ອເປັນແນວນີ້ ເຮົາກໍຈະບວດໃຫ້ທ່ານ ແລ້ວບໍ່ບວດໃຫ້ ບໍ່ຂວນຂວາຍໃຊ້ໃຫ້ບວດໃຫ້ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາຈຶ່ງກ່າວກັບສິກຂະມານາວ່າ ຖ້າທ່ານຈັກໃຫ້ຈີວອນແກ່ເຮົາ ເມື່ອເປັນແນວນີ້ ເຮົາກໍຈະບວດໃຫ້ທ່ານ ແລ້ວບໍ່ບວດໃຫ້ ບໍ່ຂວນຂວາຍໃຊ້ໃຫ້ບວດໃຫ້ນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນ ສະແດງດັ່ງນີ້

## ພຣະບັນຍັດ

[໑໑໕໑] ກໍ ພິກຂຸນີໃດກ່າວກັບສິກຂະມານາວ່າ "ແມ່ເຈົ້າ ຖ້າທ່ານຈັກໃຫ້ຈີວອນແກ່ເຮົາ ເມື່ອເປັນແນວນີ້ ເຮົາກໍຈະບວດໃຫ້ທ່ານ" ພາຍຫຼັງພິກຂຸນີນັ້ນຜູ້ບໍ່ມີອັນຕະລາຍ ບໍ່ບວດໃຫ້ ບໍ່ຂວນຂວາຍໃຊ້ໃຫ້ບວດໃຫ້ ຕ້ອງອາບັດປາຈິດຕີ

### ເລື່ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໑໑໕໔] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ສິກຂະມານາ ໄດ້ແກ່ ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີແລ້ວ

ຄຳວ່າ ແມ່ເຈົ້າ ຖ້າທ່ານຈັກໃຫ້ຈີວອນແກ່ເຮົາ ເມື່ອເປັນແບບນີ້ ເຮົາກໍຈະບວດໃຫ້ທ່ານ ຄວາມວ່າ ເມື່ອເປັນແບບນີ້ ເຮົາຈະອຸປະສົມບົດໃຫ້ທ່ານ

ຄຳວ່າ ພາຍຫຼັງພິກຂຸນີນັ້ນຜູ້ບໍ່ມີອັນຕະລາຍ ຄື ເມື່ອອັນຕະລາຍບໍ່ມີ

ຄຳວ່າ ບໍ່ບວດໃຫ້ ຄື ບໍ່ບວດໃຫ້ດ້ວຍຕົນເອງ

ຄຳວ່າ ບໍ່ຂວນຂວາຍໃຊ້ໃຫ້ບວດໃຫ້ ຄື ບໍ່ສັ່ງພິກຂຸນີອົງອື່ນ

ພໍຖືເປົາວ່າ "ຈະບໍ່ບວດໃຫ້ ບໍ່ຂວນຂວາຍໃຊ້ໃຫ້ບວດໃຫ້" ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໕໓] ໑. ພິກຂຸນີ ບໍ່ບວດໃຫ້ໃນເມື່ອມີອັນຕະລາຍ

໒. ພິກຂຸນີ ສະແຫວງຫາແລ້ວແຕ່ບໍ່ໄດ້

໓. ພິກຂຸນີ ຜູ້ເປັນໄຂ້

໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໕. ພິກຂຸນີ ວິກົນຈະລິດ

໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ໘. ກຸມາຣີພູຕະວັກ

## ສິກຂາບົດທີ ໘

## ວ່າດ້ວຍການບອກສິກຂະມານາໃຫ້ຕິດຕາມຕະຫຼອດ ໒ ປີແລ້ວບໍ່ບວດໃຫ້ເລື້ອງພິກຂຸນີຖຸນລະນັນທາ

[໑໑໕໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ສິກຂະມານາອົງໜຶ່ງເຂົ້າໄປຫາພິກຂຸນີຖຸນລະນັນທາຂໍອຸປະສົມບົດ

ພິກຂຸນີຖຸນລະນັນທາໄດ້ກ່າວກັບສິກຂະມານານັ້ນດັ່ງນີ້ວ່າ "ແມ່ເຈົ້າ ຖ້າທ່ານຈັກຕິດຕາມເຮົາຕະຫຼອດ ໔ ປີ ເມື່ອເປັນແນວນີ້ ເຮົາຈະບວດໃຫ້ທ່ານ" ແລ້ວບໍ່ບວດໃຫ້ ບໍ່ຂວນຂວາຍໃຊ້ໃຫ້ບວດໃຫ້ ລຳດັບນັ້ນ ສິກຂະມານານັ້ນບອກເລື້ອງນັ້ນ ໃຫ້ພິກຂຸນີທັງຫຼາຍຮູ້

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາເວົ້າກັບສິກຂະມານາແລ້ວວ່າ ແມ່ເຈົ້າ ຖ້າທ່ານຈັກຕິດຕາມເຮົາຕະຫຼອດ ໔ ປີ ເມື່ອເປັນແນວນີ້ ເຮົາຈະບວດໃຫ້ທ່ານ ບໍ່ບວດໃຫ້ ທັງບໍ່ຂວນຂວາຍໃຊ້ໃຫ້ບວດໃຫ້" ເມື່ອແລ້ວພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາເວົ້າກັບ ສິກຂະມານາແລ້ວວ່າ ແມ່ເຈົ້າ ຖ້າທ່ານຈັກຕິດຕາມເຮົາຕະຫຼອດ ໔ ປີ ເມື່ອເປັນຢ່າງນັ້ນ ເຮົາຈະບວດໃຫ້ທ່ານ ແລ້ວບໍ່ບວດໃຫ້ ທັງບໍ່ຂວນຂວາຍໃຊ້ໃຫ້ບວດໃຫ້ ແມ່ນບໍ?" ພວກພິກຂຸທູນຮັບວ່າ "ແມ່ນຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພິກຂຸນີຖຸນລະນັນທາກ່າວກັບສິກຂະມານາແລ້ວວ່າ ແມ່ເຈົ້າ ຖ້າທ່ານຈັກຕິດຕາມເຮົາຕະຫຼອດ ໔ ປີ ເມື່ອເປັນຢ່າງນັ້ນ ເຮົາຈະບວດໃຫ້ທ່ານ ແລ້ວບໍ່ບວດໃຫ້ ທັງບໍ່ຂວນຂວາຍໃຊ້ໃຫ້ບວດໃຫ້ນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໕໔] ກໍ ພິກຂຸນີໃດ ກ່າວກັບສິກຂະມານາວ່າ ແມ່ເຈົ້າ ຖ້າທ່ານຈັກຕິດຕາມເຮົາຕະຫຼອດ ໔ ປີ ເມື່ອເປັນຢ່າງນັ້ນ ເຮົາກໍຈະບວດໃຫ້ທ່ານ ພາຍຫຼັງພິກຂຸນີນັ້ນ ຜູ້ບໍ່ມີອັນຕະລາຍບໍ່ບວດໃຫ້ ບໍ່ຂວນຂວາຍໃຊ້ໃຫ້ຜູ້ອື່ນບວດໃຫ້ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໑໑໕໕] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ສິກຂະມານາ ໄດ້ແກ່ ສາມະເນຣີຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີ

ຄຳວ່າ ແມ່ເຈົ້າ ຖ້າທ່ານຈັກຕິດຕາມເຮົາຕະຫຼອດ ໒ ປີ ຄວາມວ່າ ທ່ານຈັກອຸປັດຖາກເຮົາ ຕະຫຼອດ ໒ ປີ

ຄຳວ່າ ເມື່ອເປັນແນວນີ້ ເຮົາກໍຈະບວດໃຫ້ທ່ານ ຄວາມວ່າ ເມື່ອເປັນແນວນີ້ ເຮົາຈະອຸປະສົມບົດໃຫ້ທ່ານ

ຄຳວ່າ ພາຍຫຼັງພິກຂຸນີນັ້ນຜູ້ບໍ່ມີອັນຕະລາຍ ຄື ເມື່ອອັນຕະລາຍບໍ່ມີ

ຄຳວ່າ ບໍ່ບວດໃຫ້ ຄື ບໍ່ບວດໃຫ້ດ້ວຍຕົນເອງ

ຄຳວ່າ ບໍ່ຂວນຂວາຍໃຊ້ໃຫ້ຜູ້ອື່ນບວດໃຫ້ ຄື ບໍ່ສັ່ງພິກຂຸນີອົງອື່ນ

ພໍຖືເບົາວ່າ “ຈະບໍ່ບວດໃຫ້ ຈະບໍ່ຂວນຂວາຍໃຊ້ໃຫ້ບວດໃຫ້” ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໕໗] ໑. ພິກຂຸນີ ຜູ້ບໍ່ບວດໃຫ້ໃນເມື່ອມີອັນຕະລາຍ

໒. ພິກຂຸນີ ສະແຫວງຫາແລ້ວແຕ່ບໍ່ໄດ້

໓. ພິກຂຸນີ ຜູ້ເປັນໄຂ້

໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໕. ພິກຂຸນີ ວິກົນຈະລິດ

໖. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໘ ຈົບ**

# ໘. ກຸມາຣີພູຕະວັກ

## ສິກຂາບົດທີ ໙

## ວ່າດ້ວຍການບວດໃຫ້ສິກຂະມານາຜູ້ຄຸກຄີກັບຊາຍ ເລື້ອງພິກຂຸນີຖຸນລະນັນທາ

[໑໑໕໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາບວດໃຫ້ສິກຂະມານາ ຊື່ຈັນທະກາລີຜູ້ຄຸກຄີກັບຊາຍ ຄຸກຄີກັບເດັກ ດຸຮ້າຍ ຜູ້ເຮັດຊາຍໃຫ້ຣະທົມໂສກເສົ້າ

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງບວດໃຫ້ສິກຂະມານາຊື່ ຈັນທະກາລີຜູ້ຄຸກຄີກັບຊາຍ ຄຸກຄີກັບເດັກ ດຸຮ້າຍ ຜູ້ເຮັດຊາຍໃຫ້ຣະທົມໂສກເສົ້າແນວນັ້ນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາບວດໃຫ້ສິກຂະມານາຊື່ຈັນທະກາລີຜູ້ຄຸກຄີກັບຊາຍ ຄຸກຄີກັບເດັກ ດຸຮ້າຍ ຜູ້ເຮັດຊາຍໃຫ້ຣະທົມໂສກ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຖຸນລະນັນທາຈຶ່ງບວດໃຫ້ສິກຂະມານາຊື່ ຈັນທະກາລີຜູ້ຄຸກຄີກັບຊາຍ ຄຸກຄີກັບເດັກ ດຸຮ້າຍ ຜູ້ເຮັດຊາຍໃຫ້ຣະທົມໂສກນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໕໙] ກໍ ພິກຂຸນີໃດ ບວດໃຫ້ສິກຂະມານາຜູ້ຄຸກຄີກັບຊາຍ ຄຸກຄີກັບເດັກ ດຸຮ້າຍ ຜູ້ເຮັດຊາຍໃຫ້ຣະທົມໂສກເສົ້າ ຕ້ອງອາບັດປາຈິດຕີ

## ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໑໑໖໐] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຊາຍ ໄດ້ແກ່ ຊາຍຜູ້ມີອາຍຸເຖິງ ໒໐ ປີ

ທີ່ຊື່ວ່າ ເດັກ ໄດ້ແກ່ ຊາຍຜູ້ມີອາຍຸບໍ່ເຖິງ ໒໐ ປີ

ທີ່ຊື່ວ່າ ຜູ້ຄຸກຄີ ຄື ຄຸກຄີດ້ວຍກິຣິຍາທາງກາຍ ແລະ ວາຈາທີ່ບໍ່ເໝາະສົມ

ທີ່ຊື່ວ່າ ດຸຮ້າຍ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຜູ້ມັກໂກດ

ທີ່ຊື່ວ່າ ຜູ້ເຮັດຊາຍໃຫ້ຣະທົມໂສກ ຄື ຜູ້ກໍ່ທຸກ ຄື ນຳຄວາມໂສກໃຫ້ແກ່ຊາຍອື່ນ

ທີ່ຊື່ວ່າ ສິກຂະມານາ ໄດ້ແກ່ ສາມະເນຣີຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີ

ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດທຸກກົດ ໒ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈາຈານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໖໑] ໑. ພິກຂຸນີ ບໍ່ຮູ້ຈຶ່ງບວດໃຫ້
໒. ພິກຂຸນີ ວິກົນຈະລິດ
໓. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໙ ຈົບ**

# ໗. ກຸມາຣີພູຕະວັກ

## ສິກຂາບົດທີ ໑໐

## ວ່າດ້ວຍການບວດໃຫ້ສິກຂະມານາທີ່ຍັງບໍ່ໄດ້ຮັບອະນຸຍາດ ເລື້ອງພິກຂຸນີຖຸນລະນັນທາ

[໑໑໖໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີຖຸນລະນັນທາບວດໃຫ້ສິກຂະມານາຜູ້ທີ່ມານດາບິດາແດ່ ສາມີແດ່ ຍັງບໍ່ໄດ້ອະນຸຍາດ ຕໍ່ມາ ມານດາບິດາແດ່ ສາມີແດ່ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງບວດໃຫ້ສິກຂະມານາ ທີ່ພວກເຮົາຍັງບໍ່ໄດ້ອະນຸຍາດນໍ"

ພິກຂຸນີທັງຫຼາຍ ໄດ້ຍິນຄົນເຫຼົ່ານີ້ຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ແມ່ເຈົ້າຖຸນລະນັນທາຈຶ່ງບວດໃຫ້ສິກຂະມານາທີ່ມານດາບິດາແດ່ ສາມີແດ່ ຍັງບໍ່ໄດ້ອະນຸຍາດນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາບວດໃຫ້ ສິກຂະມານາທີ່ມານດາບິດາແດ່ ສາມີແດ່ ຍັງບໍ່ໄດ້ອະນຸຍາດ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພິກຂຸນີຖຸນລະນັນທາ ຈຶ່ງບວດໃຫ້ສິກຂະມານາທີ່ມານດາບິດາແດ່ ສາມີແດ່ ຍັງບໍ່ໄດ້ອະນຸຍາດນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງ ໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໓໖] ກໍ ພິກຂຸນີໃດ ບວດໃຫ້ສິກຂະມານາທີ່ມານດາ ບິດາ ຫຼື ສາມີຍັງບໍ່ໄດ້ອະນຸຍາດ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຖຸນລະນັນທາ ຈົບ

## ສິກຂາບົດວິພັງ

[໑໑໓໔] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ມານດາ ບິດາ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງຜູ້ໃຫ້ກຳເນີດ

ທີ່ຊື່ວ່າ ສາມີ ໄດ້ແກ່ ຜູ້ທີ່ຄອບຄອງແມ່ຍິງ

ຄຳວ່າ ຍັງບໍ່ໄດ້ອະນຸຍາດ ຄື ຍັງບໍ່ໄດ້ບອກລາ

ທີ່ຊື່ວ່າ ສິກຂະມານາ ໄດ້ແກ່ ສາມະເນຣີຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີ

ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດທຸກກົດ ໒ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໖໕] ໑. ພິກຂຸນີ ບໍ່ຮູ້ຈຶ່ງບວດໃຫ້
໒. ພິກຂຸນີ ຂໍອະນຸຍາດກ່ອນຄ່ອຍບວດໃຫ້
໓. ພິກຂຸນີ ວິກົນຈະລິດ
໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑໐ ຈົບ**

# ໒. ກຸມາຣິພູຕະວັກ

## ສິກຂາບົດທີ ໑໑

## ວ່າດ້ວຍການບວດໃຫ້ສິກຂະມານາດ້ວຍການໃຫ້ປາຣິວາສິກະສັນທະ ເລື້ອງພິກຂຸນີຖຸນລະນັນທາ

[໑໑໖໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ພິກຂຸນີຖຸນລະນັນທານິມົນພິກຂຸເຖຣະທັງຫຼາຍໃຫ້ປະຊຸມກັນດ້ວຍກ່າວວ່າ "ຂ້ານ້ອຍຈັກບວດໃຫ້ສິກຂະມານາ" ເມື່ອເຫັນຂອງຫຍໍ້າຂອງສັນຈຳນວນຫຼາຍ ຈຶ່ງນິມົນພຣະເຖຣະທັງຫຼາຍໃຫ້ກັບໄປດ້ວຍກ່າວວ່າ "ຄູບາ ຂ້ານ້ອຍຈະຍັງບໍ່ບວດສິກຂະມານາ" ແລ້ວນິມົນພຣະເທວະທັດ ພຣະໂກກາລິກະ ພຣະກະຕະໂມຣະກະຕິດສະ ພຣະຂັນທະເທວີບຸດ ແລະພຣະສະມຸດທະທັດຕະໃຫ້ປະຊຸມກັນບວດໃຫ້ສິກຂະມານາ

ບັນດາພິກຂຸນີຜູ້ມັກໜ້ອຍ ฯລฯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຖຸນລະນັນທາ ຈຶ່ງບວດໃຫ້ສິກຂະມານາດ້ວຍການໃຫ້ປາຣິວາສິກະສັນທະນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີຖຸນລະນັນທາບວດໃຫ້ສິກຂະມາ

ນາດ້ວຍການໃຫ້ປາຣິວາສິກະສັນທະແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸຖຸນລະນັນທາ ຈຶ່ງບວດໃຫ້ສິກຂະມານາດ້ວຍປາຣິວາສິກະສັນທະນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສ ຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໖໗] ກໍ ພິກຂຸນີໃດ ບວດໃຫ້ສິກຂະມານາດ້ວຍການໃຫ້ປາຣິວາສິກະສັນທະ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຖຸນລະນັນທາ ຈົບ**

## ສິກຂາບົດວິພັງ

[໑໑໖໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ດ້ວຍການໃຫ້ປາຣິວາສິກະສັນທະ ຄື ເມື່ອທີ່ປະຊຸມເລີກໄປແລ້ວ

ທີ່ຊື່ວ່າ ສິກຂະມານາ ໄດ້ແກ່ ສາມະເນຣີຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີ

ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດທຸກກົດ ໒ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໖໙] ໑. ພິກຂຸນີ ຜູ້ບວດໃຫ້ເມື່ອບໍ່ຣິສັດຍັງບໍ່ເລີກ

໒. ພິກຂຸນີ ວິກົນຈະລິດ

໓. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ 11 ຈົບ**

# ໗. ກຸມາຣີພູຕະວັກ

## ສິກຂາບົດທີ ໑໔

### ວ່າດ້ວຍການບວດໃຫ້ສິກຂະມານາທຸກ ໆ ປີ

### ເລື້ອງພິກຂຸນີຫຼາຍອົງ

[໑໑໗໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍບວດໃຫ້ສິກຂະມານາ ທຸກ ໆ ປີ ທີ່ຢູ່ຈຶ່ງບໍ່ພຽງພໍ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີບວດໃຫ້ສິກຂະມານາທຸກ ໆ ປີ (ເຮັດໃຫ້) ທີ່ຢູ່ບໍ່ພຽງພໍນໍ"

ພິກຂຸນີທັງຫຼາຍໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີບວດໃຫ້ ສິກຂະມານາທຸກ ໆ ປີນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີບວດໃຫ້ສິກຂະມານາ ທຸກ ໆ ປີ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີບວດໃຫ້ສິກຂະມານາທຸກ ໆ ປີນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໄສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວ ຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໑໑໗໑] ກໍ ພິກຂຸນີໃດ ບວດໃຫ້ສິກຂະມານາທຸກ ໆ ປີ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຫຼາຍອົງ ຈົບ**

## ສິກຂາບົດວິພັງ

[໑໑໗໒] ຄຳວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໆລໆ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ທຸກ ໆ ປີ ຄື ໃນທຸກ ໆ ປີ

ຄຳວ່າ ບວດໃຫ້ ຄື ອຸປະສົມບົດໃຫ້

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້" ແລ້ວສະແຫວງຫາຄະນະ ອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດປາຈິດຕີ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະວາຈາ ໒ ຄັ້ງ ຕ້ອງອາບັດທຸກກົດ ໒ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໗໓] ໑. ພິກຂຸນີ ບວດໃຫ້ເວັ້ນໄລຍະ ໑ ປີ

໒. ພິກຂຸນີ ວິກົນຈະລິດ

໓. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑໒ ຈົບ**

# ໗. ກຸມາຣີພູຕະວັກ

## ສິກຂາບົດທີ ໑໓

## ວ່າດ້ວຍການບວດໃຫ້ສິກຂະມານາປີລະ ໒ ອົງ

## ເລື້ອງພິກຂຸນີຫຼາຍອົງ

[໑໑໗໒] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍບວດໃຫ້ສິກຂະມານາ ປີລະ ໒ ອົງ[1] (ເຮັດໃຫ້) ທີ່ຢູ່ບໍ່ພຽງພໍເໝືອນດັ່ງທີ່ເປັນມານັ້ນແລ ຄົນທັງຫຼາຍກໍ ຕຳໜິ

ປະນາມ ໂພນທະນາຢ່າງນັ້ນແລວ່າ "ເປັນຫຍັງ ພວກພິກຂຸນີບວດໃຫ້ສິກຂະມານາປີລະ ໔ ອົງນໍ"

ພິກຂຸນີທັງຫຼາຍ ໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີບວດໃຫ້ສິກຂະມານາປີລະ ໔ ອົງນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີບວດໃຫ້ສິກຂະມານາປີລະ ໔ ອົງ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີບວດໃຫ້ສິກຂະມານາ ປີລະ ໔ ອົງນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໗໔] ກໍ ພິກຂຸນີໃດ ບວດໃຫ້ສິກຂະມານາ ໔ ອົງ ໃນ ໑ ປີ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໑໗໕] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ໃນ ໑ ປີ ຄື ໃນປີດຽວກັນ

ຄຳວ່າ ບວດໃຫ້ສິກຂະມານາ ໔ ອົງ ຄື ອຸປະສົມບົດໃຫ້ສິກຂະມານາ ໔ ອົງ

ພິກຂຸນີຕັ້ງໃຈວ່າ "ຈະບວດໃຫ້ສິກຂະມານາ ໔ ອົງ" ແລ້ວສະແຫວງຫາຄະນະອາຈານ ບາດ ຫຼື ຈີວອນ ຫຼື ສົມມຸດສີມາ ຕ້ອງອາບັດທຸກກົດ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳມະ

ວາຈາ ໔ ຄັ້ງ  ຕ້ອງອາບັດທຸກກົດ ໔ ຕົວ ຈົບກຳມະວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັດຊາ ຕ້ອງອາບັດປາຈິດຕີ ຄະນະ ແລະ ອາຈານ ຕ້ອງອາບັດທຸກກົດ

**ອະນາປັດຕິວານ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໗໗] ໑. ພິກຂຸນີ ເວັ້ນໄລຍະ ໑ ປີ ບວດໃຫ້ສິກຂະມານາອົງດຽວ
໔. ພິກຂຸນີ ວິກົນຈະລິດ
໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑໕ ຈົບ**

**ກຸມາຣີພູຕະວັກທີ ໗ ຈົບ**

# ໘. ສັດຕຸປາຫະນະວັກ

## ໝວດວ່າດ້ວຍຮົ່ມແລະເກີບ

## ສິກຂາບົດທີ ໑

## ວ່າດ້ວຍພິກຂຸນີຜູ້ບໍ່ເປັນໄຂ້ກັ້ງຮົ່ມແລະໃສ່ເກີບ

## ເລື້ອງພິກຂຸນີສັບພັກຄີ

[໑໑໗໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີສັບພັກຄີກັ້ງຮົ່ມແລະໃສ່ເກີບ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງກັ້ງຮົ່ມແລະໃສ່ເກີບເໝືອນແມ່ຍິງຄະລືຫັດຜູ້ບໍຣິໂພກການນໍ"

ພິກຂຸນີທັງຫຼາຍໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີສັບພັກຄີ ຈຶ່ງກັ້ງຮົ່ມແລະໃສ່ເກີບນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີ ສັບພັກຄີກັ້ງຮົ່ມແລະໃສ່ເກີບ ແມ່ນບໍ?" ພິກຂຸທັງຫຼາຍ ທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີສັບພັກຄີຈິ່ງກັ້ງຮົ່ມແລະໃສ່ເກີບບໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈິ່ງ ຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

ກໍພິກຂຸນີໃດ ກັ້ງຮົ່ມ ແລະ ໃສ່ເກີບ ຕ້ອງອາບັດປາຈິດຕີ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸນີທັງຫຼາຍແນວນີ້

### ເລື້ອງພິກຂຸນີສັບພັກຄີ ຈົບ

## ເລື້ອງພິກຂຸນີເປັນໄຂ້

[໑໑໒໙] ສະໄໝນັ້ນ ພິກຂຸນີອົງໜຶ່ງເປັນໄຂ້ ຂາດຮົ່ມແລະເກີບແລ້ວ ທ່ານຈະບໍ່ມີຄວາມຜາສຸກ ພວກພິກຂຸຈິ່ງຂາບທູນເລື້ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ ຯລຯ

## ຊົງອະນຸຍາດຮົ່ມແລະເກີບ

ພຣະຜູ້ມີພຣະພາກເຈົ້າ ຊົງອະນຸຍາດວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮົ່ມແລະເກີບແກ່ພິກຂຸນີຜູ້ເປັນໄຂ້" ແລ້ວຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະອະນຸບັນຍັດ

[໑໑໗໐] ອັນໜຶ່ງ ພິກຂຸນີໃດ ຜູ້ບໍ່ເປັນໄຂ້ ກັ້ງຮົ່ມ ແລະ ໃສ່ເກີບ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີເປັນໄຂ້ ຈົບ

### ສິກຂາບົດວິພັງ

[໑໑໗໑] ຄຳວ່າ ອັນໜຶ່ງ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຜູ້ບໍ່ເປັນໄຂ້ ຄື ຜູ້ທີ່ຂາດຮົ່ມແລະເກີບກໍຍັງມີຄວາມຜາສຸກ

ທີ່ຊື່ວ່າ ຜູ້ເປັນໄຂ້ ຄື ຜູ້ຂາດຮົ່ມແລະເກີບແລ້ວບໍ່ມີຄວາມຜາສຸກ

ທີ່ຊື່ວ່າ ຮົ່ມ ໄດ້ແກ່ຮົ່ມ ໓ ຊະນິດ ຄື (໑) ຮົ່ມຂາວ (໒) ຮົ່ມລຳແພນ (໓) ຮົ່ມໃບໄມ້ ທີ່ຫຍິບເປັນວົງກົມ ຫຍິບເຂົ້າກັບດີ້ວ

ຄຳວ່າ ກັ້ງ ຯລຯ ໃສ່ ຄື ພິກຂຸນີກັ້ງໃສ່ແມ່ນຄັ້ງດຽວ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໑໑໓໔] ບໍ່ເປັນໄຂ້ ພິກຂຸນີສຳຄັນວ່າບໍ່ເປັນໄຂ້ ກັ້ງຮົ່ມແລະໃສ່ເກີບ ຕ້ອງອາບັດປາຈິດຕີ

ບໍ່ເປັນໄຂ້ ພິກຂຸນີບໍ່ແນ່ໃຈ ກັ້ງຮົ່ມແລະໃສ່ເກີບ ຕ້ອງອາບັດປາຈິດຕີ

ບໍ່ເປັນໄຂ້ ພິກຂຸນີສຳຄັນວ່າເປັນໄຂ້ ກັ້ງຮົ່ມແລະໃສ່ເກີບ ຕ້ອງອາບັດປາຈິດຕີ

## ທຸກກົດ

ພິກຂຸນີກັ້ງຮົ່ມ ແຕ່ບໍ່ໃສ່ເກີບ ຕ້ອງອາບັດທຸກກົດ

ພິກຂຸນີໃສ່ເກີບ ແຕ່ບໍ່ກັ້ງຮົ່ມ ຕ້ອງອາບັດທຸກກົດ

ເປັນໄຂ້ ພິກຂຸນີສຳຄັນວ່າບໍ່ເປັນໄຂ້ ກັ້ງຮົ່ມແລະໃສ່ເກີບ ຕ້ອງອາບັດທຸກກົດ

ເປັນໄຂ້ ພິກຂຸນີບໍ່ແນ່ໃຈ ກັ້ງຮົ່ມແລະໃສ່ເກີບ ຕ້ອງອາບັດທຸກກົດ

ເປັນໄຂ້ ພິກຂຸນີສຳຄັນວ່າເປັນໄຂ້ ກັ້ງຮົ່ມແລະໃສ່ເກີບ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໓໓] ໑. ພິກຂຸນີ ຜູ້ເປັນໄຂ້

໒. ພິກຂຸນີ ໃຊ້ຮົ່ມຢູ່ໃນອາຣາມ ຫຼື ອຸປະຈານແຫ່ງອາຣາມ

໓. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑ ຈົບ**

# ໙. ສັດຕຸປາທະນະວັກ

## ສິກຂາບົດທີ ໔

### ວ່າດ້ວຍການເດີນທາງດ້ວຍຍານພາຫະນະ

### ເລື້ອງພິກຂຸນີສັບພັກຄີ

[໑໑໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີສັບພັກຄີໂດຍສານຍານໄປ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງໂດຍສານຍານໄປເໝືອນແມ່ຍິງຄະລຶຫັດຜູ້ບໍຣິໂພກກາມນໍ"

ພິກຂຸນີທັງຫຼາຍ ໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງໂດຍສານຍານໄປນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີໂດຍສານຍານໄປແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງໂດຍສານຍານໄປນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

ກໍ ພິກຂຸນີໃດ ໂດຍສານຍານພາຫານະ ຕ້ອງອາບັດປາຈິດຕິ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸນີທັງຫຼາຍແນວນີ້

**ເລື້ອງພິກຂຸນີສັບພັກຄີ ຈົບ**

## ເລື້ອງພິກຂຸນີເປັນໄຂ້

[໑໑໗໔] ສະໄໝນັ້ນ ພິກຂຸນີອົງໜຶ່ງເປັນໄຂ້ ບໍ່ສາມາດຈະຍ່າງໄປໄດ້ ພວກພິກຂຸຈຶ່ງຂາບທູນເລື້ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ ฯລฯ

## ຊົງອະນຸຍາດຍານພາຫະນະ

ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຍານແກ່ພິກຂຸນີຜູ້ເປັນໄຂ້" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໑໑໗໕] ອັນໜຶ່ງ ພິກຂຸນີໃດ ຜູ້ບໍ່ເປັນໄຂ້ ໂດຍສານຍານພາຫານະ ຕ້ອງອາບັດປາຈິດຕີ

## ເລື້ອງພິກຂຸນີເປັນໄຂ້ ຈົບ

## ສິກຂາບົດວິພັງ

[໑໑໗໖] ຄຳວ່າ ອັນໜຶ່ງ ฯລฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ฯລฯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຜູ້ບໍ່ເປັນໄຂ້ ຄື ຜູ້ສາມາດຍ່າງໄປໄດ້

ທີ່ຊື່ວ່າ ຜູ້ເປັນໄຂ້ ຄື ຜູ້ບໍ່ສາມາດຍ່າງໄປໄດ້

ທີ່ຊື່ວ່າ ຍານ ໄດ້ແກ່ ວໍ ລົດ ກວຽນ ຄານຫາມ ສະແນນ ເປຫາມ

ຄຳວ່າ ໂດຍສານ ฯລฯ ໄປ ຄື ໄປດ້ວຍຍານແມ່ນຄັ້ງດຽວ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໑໑໗໗] ບໍ່ເປັນໄຂ້ ພິກຂຸນີສຳຄັນວ່າບໍ່ເປັນໄຂ້ ໂດຍສານຍານໄປ ຕ້ອງອາບັດປາຈິດຕີ

ບໍ່ເປັນໄຂ້ ພິກຂຸນີບໍ່ແນ່ໃຈ ໂດຍສານຍານໄປ ຕ້ອງອາບັດປາຈິດຕີ

ບໍ່ເປັນໄຂ້ ພິກຂຸນີສຳຄັນວ່າເປັນໄຂ້ ໂດຍສານຍານໄປ ຕ້ອງອາບັດປາຈິດຕີ

### ທຸກະທຸກກົດ

ເປັນໄຂ້ ພິກຂຸນີສຳຄັນວ່າບໍ່ເປັນໄຂ້ ໂດຍສານຍານໄປ ຕ້ອງອາບັດທຸກກົດ
ເປັນໄຂ້ ພິກຂຸນີບໍ່ແນ່ໃຈ ໂດຍສານຍານໄປ ຕ້ອງອາບັດທຸກກົດ
ເປັນໄຂ້ ພິກຂຸນີສຳຄັນວ່າເປັນໄຂ້ ໂດຍສານຍານໄປ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໗໙] ໑. ພິກຂຸນີ ຜູ້ເປັນໄຂ້
໒. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໓. ພິກຂຸນີ ວິກົນຈະລິດ
໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

# ໙. ສັດຕຸປາຫະນະວັກ

## ສິກຂາບົດທີ ໑

## ວ່າດ້ວຍການໃຊ້ເຄື່ອງປະດັບແອວ

## ເລື້ອງພິກຂຸນີອົງໜຶ່ງ

[໑໑໘໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີອົງໜຶ່ງເປັນພິກຂຸນີປະຈຳຕະກູນຂອງຍິງຄົນໜຶ່ງ ສະໄໝນັ້ນ ຍິງນັ້ນໄດ້ກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ "ແມ່ເຈົ້າ ທ່ານໂຜດນຳເຄື່ອງປະດັບແອວນີ້ໄປໃຫ້ຍິງຊື່ນັ້ນ" ລຳດັບນັ້ນ ພິກຂຸນີນັ້ນຄິດວ່າ "ຖ້າເຮົາຈະໃສ່ບາດຍ່າງໄປ ເຮົາຕ້ອງເສຍຫາຍແນ່" ຈຶ່ງໃສ່ເຄື່ອງປະດັບຍ່າງໄປ ເມື່ອດ້າຍຂາດ ເຄື່ອງປະດັບແອວຕົກກາຈາຍທົ່ວລົງເທິງຖະໜົນ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງໃຊ້ເຄື່ອງປະດັບແອວເໝືອນແມ່ຍິງຄະລືຫັດຜູ້ບໍລິໂພກກາມນໍ"

ພິກຂຸນີທັງຫຼາຍໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີຈຶ່ງໃຊ້ເຄື່ອງປະດັບແອວນໍ"

ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີໃຊ້ເຄື່ອງປະດັບແອວ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີຈຶ່ງໃຊ້ເຄື່ອງປະດັບແອວນໍ ພິກຂຸທັງຫຼາຍ ການກະທຳແບບນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໗໑] ກໍ ພິກຂຸນີໃດ ໃຊ້ເຄື່ອງປະດັບແອວ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີອົງໜຶ່ງ ຈົບ**

## ສິກຂາບົດວິພັງ

[໑໑໗໔] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ຊື່ວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ເຄື່ອງປະດັບແອວ ໄດ້ແກ່ ເຄື່ອງປະດັບທີ່ໃສ່ແອວຊະນິດໃດຊະນິດໜຶ່ງ

ຄຳວ່າ ໃຊ້ ຄື ພິກຂຸນີໃຊ້ແມ່ນຄັ້ງດຽວ ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໗໕] ໑. ພິກຂຸນີ ໃຊ້ສາຍຮັດແອວຍ້ອນມີເຫດຜົນຄືອາພາດ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໕ ຈົບ**

# ໙. ສັດຕຸປາຫະນະວັກ

## ສິກຂາບົດທີ ໔

## ວ່າດ້ວຍການໃຊ້ເຄື່ອງປະດັບຂອງສະຕີ

### ເລື້ອງພິກຂຸນີສັບພັກຄີ

[໑໑໙໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີສັບພັກຄີໃຊ້ເຄື່ອງປະດັບຂອງຍິງ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງໃຊ້ເຄື່ອງປະດັບຂອງສະຕີເໝືອນຍິງຄະລືຫັດຜູ້ບໍຣິໂພກກາມນໍ"

ພິກຂຸນີ ທັງຫຼາຍໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງ ໃຊ້ເຄື່ອງປະດັບຂອງສະຕີນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບສວນພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີໃຊ້ເຄື່ອງປະດັບຂອງສະຕີ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີສັບພັກຄີ ຈຶ່ງໃຊ້ເຄື່ອງປະດັບຂອງສະຕີນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໑໑໙໕] ກໍ ພິກຂຸນີໃດ ໃຊ້ເຄື່ອງປະດັບຂອງສະຕີ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີສັບພັກຄີ ຈົບ**

### ສິກຂາບົດວິພັງ

[໑໑໔໖] ຄຳວ່າ ກໍ ໆລໆ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ໆລໆ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ໆລໆ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ເຄື່ອງປະດັບຂອງສະຕີ ໄດ້ແກ່ ເຄື່ອງປະດັບຫົວ ເຄື່ອງປະດັບລຳຄໍ ເຄື່ອງປະດັບມື ເຄື່ອງປະດັບຕີນ ເຄື່ອງປະດັບແອວ

ຄຳວ່າ ໃຊ້ ຄື ພິກຂຸນີໃຊ້ແມ່ນຄັ້ງດຽວ ຕ້ອງອາບັດປາຈິດຕີ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໑໔໗] ໑. ພິກຂຸນີ ໃຊ້ເຄື່ອງປະດັບຂອງສະຕີຍ້ອນມີເຫດຜົນຄືອາພາດ

໔. ພິກຂຸນີ ວິກົນຈະລິດ

໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໔ ຈົບ**

# ໕. ສັດຕຸປາຫະນະວັກ

## ສິກຂາບົດທີ ໕

## ວ່າດ້ວຍການໃຊ້ຂອງຫອມເຄື່ອງຍ້ອມຜິວ ເລື້ອງພິກຂຸນີສັບພັກຄີ

[໑໑໔໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີສັບພັກຄີອາບນໍ້າດ້ວຍຂອງຫອມແລະເຄື່ອງຍ້ອມຜິວ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພວກພິກຂຸນີທັງຫຼາຍຈຶ່ງອາບນໍ້າດ້ວຍຂອງຫອມແລະເຄື່ອງຍ້ອມຜິວເໝືອນແມ່ຍິງຄະລືຫັດ ຜູ້ບໍລິໂພກກາມນໍ”

ພິກຂຸນີທັງຫຼາຍ ໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ໆລໆ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພວກພິກຂຸນີ ສັບພັກຄີຈຶ່ງໄດ້

ອາບນ້ຳດ້ວຍຂອງຫອມແລະເຄື່ອງຍ້ອມຜິວບໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີອາບນ້ຳດ້ວຍຂອງຫອມແລະເຄື່ອງຍ້ອມຜິວ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ ເປັນຫຍັງພວກພິກຂຸນີ ສັບພັກຄີຈຶ່ງອາບນ້ຳດ້ວຍຂອງຫອມແລະເຄື່ອງຍ້ອມຜິວບໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງ ດັ່ງນີ້

## ພຣະບັນຍັດ

[໑໑໙໙] ກໍ ພິກຂຸນີໃດ ອາບນ້ຳດ້ວຍຂອງຫອມແລະເຄື່ອງຍ້ອມຜິວ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີສັບພັກຄີ ຈົບ

## ສິກຂາບົດວິພັງ

[໑໘໐໐] ຄຳວ່າ ກໍ ฯລฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ฯລฯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຂອງຫອມ ໄດ້ແກ່ ຂອງທີ່ມີກິ່ນຫອມຊະນິດໃດຊະນິດໜຶ່ງ

ທີ່ຊື່ວ່າ ເຄື່ອງຍ້ອມຜິວ ໄດ້ແກ່ ເຄື່ອງຍ້ອມຜິວຊະນິດໃດຊະນິດໜຶ່ງ

ຄຳວ່າ ອາບນ້ຳ ຄື ພິກຂຸນີອາບນ້ຳ ຕ້ອງອາບັດທຸກກົດໃນຂະນະທີ່ອາບນ້ຳ ອາບນ້ຳສຳເລັດ ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໘໐໑] ໑. ພິກຂຸນີ ອາບນ້ຳຍ້ອນມີເຫດຜົນຄືອາພາດ

໒. ພິກຂຸນີ ວິກົນຈະລິດ

໓. ພິກຂຸນີ ຕົ້ນບັນຍັດ

### ສິກຂາບົດທີ ໕ ຈົບ

# ໗. ສັດຕຸປາທະນະວັກ

## ສິກຂາບົດທີ ໖

## ວ່າດ້ວຍການໃຊ້ຜົງແປ້ງອົບກິ່ນ

## ເລື້ອງພິກຂຸນີສັບພັກຄີ

[໑໘໐໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີສັບພັກຄີອາບນໍ້າດ້ວຍແປ້ງທີ່ອົບກິ່ນ ຄົນທັງຫຼາຍຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງອາບນໍ້າດ້ວຍແປ້ງທີ່ອົບກິ່ນເໝືອນແມ່ຍິງຄະລືຫັດຜູ້ບໍຣິໂພກກາມນໍ"

ພິກຂຸນີທັງຫຼາຍ ໄດ້ຍິນຄົນເຫຼົ່ານັ້ນຕໍາໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີ ສັບພັກຄີຈຶ່ງອາບນໍ້າດ້ວຍແປ້ງທີ່ອົບກິ່ນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນໍາເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີອາບນໍ້າ ດ້ວຍແປ້ງທີ່ອົບກິ່ນ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີສັບພັກຄີຈຶ່ງອາບນໍ້າດ້ວຍແປ້ງທີ່ອົບກິ່ນນໍ ພິກຂຸທັງຫຼາຍ ການກະທໍາແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໘໐໙] ກໍ ພິກຂຸນີໃດ ອາບນໍ້າດ້ວຍແປ້ງອົບກິ່ນ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີສັບພັກຄີ ຈົບ**

## ສິກຂາບົດວິພັງ

[໑໔໐໔] ຄຳວ່າ ກໍ ຫລຯ ໃດ ຄວາມວ່າ ຜູ້ໃດ ຄື ຜູ້ເຊັ່ນໃດ ຫລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າ ຕັດວ່າ ກໍ ຫລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຫລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ອົບກິ່ນ ໄດ້ແກ່ ອົບດ້ວຍກິ່ນຫອມຊະນິດໃດຊະນິດໜຶ່ງ

ທີ່ຊື່ວ່າ ແປ້ງ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງແປ້ງງາ

ຄຳວ່າ ອາບນ້ຳ ຄື ພິກຂຸນີອາບນ້ຳ ຕ້ອງອາບັດທຸກກົດໃນຂະນະທີ່ອາບນ້ຳ ອາບນ້ຳສຳເລັດ ຕ້ອງອາບັດປາຈິດຕີ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໔໐໕] ໑. ພິກຂຸນີ ອາບນ້ຳຍ້ອນມີເຫດຜົນຄືອາພາດ
໒. ພິກຂຸນີ ອາບນ້ຳດ້ວຍແປ້ງທີ່ໃຊ້ຕາມປົກກະຕິ
໓. ພິກຂຸນີ ວິກົນຈະລິດ
໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໖ ຈົບ**

# ໙. ສັດຕຸປາທະນະວັກ

## ສິກຂາບົດທີ ໑

## ວ່າດ້ວຍການໃຫ້ບີບນວດ

## ເລື່ອງພິກຂຸນີຫຼາຍອົງ

[໑໔໐໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍໃຊ້ພິກຂຸນີໃຫ້ບີບແດ່ ໃຫ້ນວດແດ່ ຄົນທັງຫຼາຍທ່ຽວໄປຕາມວິຫານເຫັນແລ້ວຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີ ຈຶ່ງໃຊ້ພິກຂຸນີໃຫ້ບີບແດ່ ໃຫ້ນວດແດ່ ເໝືອນແມ່ຍິງຄະລືຫັດຜູ້ບໍລິໂພກກາມນໍ"

ພິກຂຸນີທັງຫຼາຍ ໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງໃຊ້ພິກຂຸນີໃຫ້ບີບແດ່ ໃຫ້ນວດແດ່ນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີໃຊ້ພິກຂຸນີໃຫ້ບີບແດ່ ໃຫ້ນວດແດ່ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີຈຶ່ງໃຊ້ພິກຂຸນີໃຫ້ບີບແດ່ ໃຫ້ນວດແດ່ນໍ ພິກຂຸທັງຫຼາຍ ການກະທຳ ຢ່າງນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສ ຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໔໐໗] ກໍ ພິກຂຸນີໃດ ໃຊ້ພິກຂຸນີໃຫ້ບີບ ຫຼື ໃຫ້ນວດ ຕ້ອງອາບັດປາຈິດຕີ

### ເລື່ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໔໐໘] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ໃຊ້ພິກຂຸນີ ໄດ້ແກ່ ໃຊ້ພິກຂຸນີອົງອື່ນ

ຄຳວ່າ ໃຫ້ບີບ ຄື ພິກຂຸນີໃຊ້ໃຫ້ບີບ ຕ້ອງອາບັດປາຈິດຕີ

ຄຳວ່າ ຫຼື ໃຫ້ນວດ ຄື ໃຊ້ໃຫ້ນວດ ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໔໐໙] ໑. ພິກຂຸນີ ຜູ້ເປັນໄຂ້

໔. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໕. ພິກຂຸນີ ວິກົນຈະລິດ
໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໗ ຈົບ**

# ໘. ສັດຕຸປາຫະນະວັກ

## ສິກຂາບົດທີ ໗-໘-໑໐[1]

## ວ່າດ້ວຍການໃຊ້ (ສິກຂະມານາ-ສາມະເນຣີ) ຄະລືຫັດໃຫ້ບີບນວດ ເລື້ອງພິກຂຸນີຫຼາຍອົງ

[໑໔໑໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍ (ໃຊ້ສິກຂະມານາໃຫ້ບີບແດ່ ໃຫ້ນວດແດ່ ຯລຯ ໃຊ້ສາມະເນຣີໃຫ້ບີບແດ່ ໃຫ້ນວດແດ່ ຯລຯ) ໃຊ້ຍິງຄະລືຫັດໃຫ້ບີບແດ່ ໃຫ້ນວດແດ່ ຄົນທັງຫຼາຍທ່ຽວຈາຣິກໄປຕາມວິຫານເຫັນຈຶ່ງຕໍາໜິປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງໃຊ້ຍິງຄະລືຫັດໃຫ້ບີບແດ່ ໃຫ້ນວດແດ່ເໝືອນແມ່ຍິງຄະລືຫັດຜູ້ບໍຣິໂພກກາມນໍ"

ພິກຂຸນີທັງຫຼາຍໄດ້ຍິນຄົນພວກນັ້ນຕໍາໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີຈຶ່ງໃຊ້ຍິງຄະລືຫັດໃຫ້ບີບແດ່ ໃຫ້ນວດແດ່ນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນໍາເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີໃຊ້ຍິງຄະລືຫັດໃຫ້ບີບແດ່ ໃຫ້ນວດແດ່ ແມ່ນບໍ?" ພິກຂຸທັງຫຼາຍ ທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕໍາໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີຈຶ່ງໃຊ້ຍິງຄະລືຫັດໃຫ້ບີບແດ່ ໃຫ້ນວດແດ່ນໍ ພິກຂຸທັງຫຼາຍ ການກະທໍາແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ

ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໔໑໑] ກໍພິກຂຸນີໃດ (ໃຊ້ສິກຂະມານາ - ໃຊ້ສາມະເນຣີ) ໃຊ້ຍິງຄະລືຫັດໃຫ້ບີບ ຫຼື ໃຫ້ນວດ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຫຼາຍອົງ ຈົບ**

## ສິກຂາບົດວິພັງ

[໑໔໑໒] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ສິກຂະມານາ ໄດ້ແກ່ສະຕີຜູ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີ

ຊື່ວ່າ ສາມະເນຣີ ໄດ້ແກ່ ສະຕີຜູ້ຖືສິກຂາບົດ ໑໐ ຂໍ້

ທີ່ຊື່ວ່າ ຍິງຄະລືຫັດ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງສະຕີຜູ້ຄອງເຮືອນ

ຄຳວ່າ ໃຫ້ບີບ ຄື ພິກຂຸນີໃຊ້ໃຫ້ບີບ ຕ້ອງອາບັດປາຈິດຕີ

ຄຳວ່າ ຫຼື ໃຫ້ນວດ ຄື ໃຊ້ໃຫ້ນວດ ຕ້ອງອາບັດປາຈິດຕີ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໔໑໓] ໑. ພິກຂຸນີ ໃຊ້ໃຫ້ບີບ ຫຼື ນວດຍ້ອນອາພາດເປັນເຫດ

໒. ພິກຂຸນີ ຜູ້ມີເຫດຂັດຂ້ອງ

໓. ພິກຂຸນີ ວິກົນຈະລິດ

໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໙-໗-໑໐ ຈົບ**

# ໗. ສັດຕຸປາຫະນະວັກ

## ສິກຂາບົດທີ ໑໑

## ວ່າດ້ວຍການນັ່ງເທິງອາສະນະໂດຍບໍ່ຂໍໂອກາດກ່ອນ

## ເລື້ອງພິກຂຸນີຫຼາຍອົງ

[໑໔໑໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍບໍ່ບອກກ່ອນ ນັ່ງ

ເທິງອາສະນະຂ້າງໜ້າພິກຂຸ ພິກຂຸທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີບໍ່ບອກກ່ອນນັ່ງເທິງອາສະນະຂ້າງໜ້າພິກຂຸນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີບໍ່ບອກກ່ອນນັ່ງເທິງອາສະນະຂ້າງໜ້າພິກຂຸ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ฯລฯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີບໍ່ບອກກ່ອນນັ່ງເທິງອາສະນະຂ້າງໜ້າພິກຂຸນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ

ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໔໑໕] ກໍ ພິກຂຸນີໃດ ບໍ່ບອກກ່ອນນັ່ງເທິງອາສະນະຂ້າງໜ້າພິກຂຸ ຕ້ອງອາບັດປາຈິດຕີ

**ເລື້ອງພິກຂຸນີຫຼາຍອົງ ຈົບ**

## ສິກຂາບົດວິພັງ

[໑໔໑໖] ຄຳວ່າ ກໍ ฯລฯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ฯລฯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ຂ້າງໜ້າພິກຂຸ ຄື ຂ້າງໜ້າອຸປະສຳບັນ

ຄຳວ່າ ບໍ່ບອກກ່ອນ ຄື ບໍ່ຂໍໂອກາດກ່ອນ

ຄຳວ່າ ນັ່ງເທິງອາສະນະ ຄື ພິກຂຸນີນັ່ງໂດຍທີ່ສຸດແມ່ນເທິງພື້ນດິນ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

## ຕິກະປາຈິດຕີ

[໑໔໑໗] ຍັງບໍ່ໄດ້ບອກ ພິກຂຸນີສຳຄັນວ່າຍັງບໍ່ໄດ້ບອກ ນັ່ງເທິງອາສະນະ ຕ້ອງອາບັດປາຈິດຕີ

ຍັງບໍ່ໄດ້ບອກ ພິກຂຸນີບໍ່ແນ່ໃຈ ນັ່ງເທິງອາສະນະ ຕ້ອງອາບັດປາຈິດຕີ

ຍັງບໍ່ໄດ້ບອກ ພິກຂຸນີສຳຄັນວ່າບອກແລ້ວ ນັ່ງເທິງອາສະນະ ຕ້ອງອາບັດປາຈິດຕີ

## ທຸກກົດ

ບອກແລ້ວ ພິກຂຸນີສຳຄັນວ່າຍັງບໍ່ໄດ້ບອກ ນັ່ງເທິງອາສະນະ ຕ້ອງອາບັດທຸກກົດ
ບອກແລ້ວ ພິກຂຸນີບໍ່ແນ່ໃຈ ນັ່ງເທິງອາສະນະ ຕ້ອງອາບັດທຸກກົດ
ບອກແລ້ວ ພິກຂຸນີສຳຄັນວ່າບອກແລ້ວ ນັ່ງເທິງອາສະນະ ບໍ່ຕ້ອງອາບັດ

## ອະນາປັດຕິວານ

[໑໘໑໗] ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸນີ ບອກກ່ອນຈຶ່ງນັ່ງເທິງອາສະນະ
໒. ພິກຂຸນີ ຜູ້ເປັນໄຂ້
໓. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໔. ພິກຂຸນີ ວິກົນຈະລິດ
໕. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑໑ ຈົບ**

# ໙. ສັດຕຸປາຫະນະວັກ

## ສິກຂາບົດທີ ໑໒

## ວ່າດ້ວຍການຖາມບັນຫາກັບພິກຂຸໂດຍບໍ່ໄດ້ຂໍໂອກາດ

## ເລື້ອງພິກຂຸນີຫຼາຍອົງ

[໑໘໑໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫຼາຍຖາມບັນຫາພິກຂຸທີ່ຕົນຍັງບໍ່ໄດ້ຂໍໂອກາດ ພິກຂຸທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງຖາມບັນຫາພິກຂຸທີ່ຕົນຍັງບໍ່ໄດ້ຂໍໂອກາດນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີຖາມບັນຫາພິກຂຸທີ່ຕົນຍັງບໍ່

ໄດ້ຂໍໂອກາດ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸນີ ຈຶ່ງຖາມບັນຫາພິກຂຸທີ່ຕົນຍັງບໍ່ໄດ້ຂໍໂອກາດນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ

ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໘໘໐] ກໍ ພິກຂຸນີໃດ ຖາມບັນຫາພິກຂຸທີ່ຕົນຍັງບໍ່ໄດ້ຂໍໂອກາດ ຕ້ອງອາບັດປາຈິດຕີ

### ເລື່ອງພິກຂຸນີຫຼາຍອົງ ຈົບ

## ສິກຂາບົດວິພັງ

[໑໘໘໑] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ທີ່ຕົນຍັງບໍ່ໄດ້ຂໍໂອກາດ ຄື ຕົນຍັງບໍ່ໄດ້ບອກ

ຄຳວ່າ ພິກຂຸ ໄດ້ແກ່ ອຸປະສຳບັນ

ຄຳວ່າ ຖາມບັນຫາ ຄື ພິກຂຸນີຂໍໂອກາດໃນພຣະສູດແຕ່ຖາມພຣະວິໄນ ຫຼື ພຣະອະພິທຳ ຕ້ອງອາບັດປາຈິດຕີ

ຂໍໂອກາດໃນພຣະວິໄນ ແຕ່ຖາມພຣະສູດ ຫຼື ພຣະອະພິທຳ ຕ້ອງອາບັດປາຈິດຕີ

ຂໍໂອກາດໃນພຣະອະພິທຳ ແຕ່ຖາມພຣະສູດ ຫຼື ພຣະວິໄນ ຕ້ອງອາບັດປາຈິດຕີ

## ບົດພາຊະນີ

### ຕິກະປາຈິດຕີ

[໑໘໘໒] ຍັງບໍ່ໄດ້ບອກ ພິກຂຸນີສຳຄັນວ່າຍັງບໍ່ໄດ້ບອກ ຖາມບັນຫາ ຕ້ອງອາບັດປາຈິດຕີ

ຍັງບໍ່ໄດ້ບອກ ພິກຂຸນີບໍ່ແນ່ໃຈ ຖາມບັນຫາ ຕ້ອງອາບັດປາຈິດຕີ

ຍັງບໍ່ໄດ້ບອກ ພິກຂຸນີສຳຄັນວ່າບອກແລ້ວ ຖາມບັນຫາ ຕ້ອງອາບັດປາຈິດຕີ

### ທຸກະທຸກກົດ

ບອກແລ້ວ ພິກຂຸນີສຳຄັນວ່າຍັງບໍ່ໄດ້ບອກ ຖາມບັນຫາ ຕ້ອງອາບັດທຸກກົດ

ບອກແລ້ວ ພິກຂຸນີບໍ່ແນ່ໃຈ ຖາມບັນຫາ ຕ້ອງອາບັດທຸກກົດ
ບອກແລ້ວ ພິກຂຸນີສຳຄັນວ່າບອກແລ້ວ ຖາມບັນຫາ ບໍ່ຕ້ອງອາບັດ

### ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໔໔໓] ໑. ພິກຂຸນີຂໍ ໂອກາດແລ້ວຈຶ່ງຖາມ
໔. ພິກຂຸນີ ຂໍໂອກາດໂດຍບໍ່ໄດ້ເຈາະຈົງແລ້ວຈຶ່ງຖາມໃນປີດົກໃດປີດົກໜຶ່ງ
໓. ພິກຂຸນີ ວິກົນຈະລິດ
໔. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑໔ ຈົບ**

# ໙. ສັດຕຸປາທະນະວັກ

## ສິກຂາບົດທີ ໑໓
## ວ່າດ້ວຍການເຂົ້າໝູ່ບ້ານໂດຍບໍ່ມີຜ້າຮັດຖັນ
## ເລື່ອງພິກຂຸນີອົງໜຶ່ງ

[໑໔໔໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພິກຂຸນີອົງໜຶ່ງບໍ່ມີຜ້າຮັດຖັນເຂົ້າໄປບິນທະບາດໃນໝູ່ບ້ານ ຂະນະທີ່ທ່ານຍ່າງຢູ່ເທິງຖະໜົນລົມບ້າໝູພັດເປີດສັງຄາຕິຈ້ອນຂຶ້ນ ຄົນທັງຫຼາຍສົ່ງສຽງວ່າ "ຖັນແລະທ້ອງຂອງແມ່ເຈົ້າງາມແທ້" ພິກຂຸນີນັ້ນຖືກຄົນທັງຫຼາຍ ຢອກຫຼິ້ນຈຶ່ງເກີ້ເຂີນ ເມື່ອທ່ານໄປເຖິງທີ່ຢູ່ຈຶ່ງບອກເລື້ອງນັ້ນໃຫ້ພິກຂຸນີທັງຫຼາຍຮູ້

ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸນີບໍ່ມີຜ້າຮັດຖັນຈຶ່ງເຂົ້າໄປໝູ່ບ້ານນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸນີບໍ່ມີຜ້າຮັດຖັນເຂົ້າໄປໝູ່ບ້ານແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິ

ວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພິກຂຸນີບໍ່ມີຜ້າຮັດຖັນຈຶ່ງເຂົ້າໄປໝູ່ບ້ານນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໔໔໕] ກໍ ພິກຂຸນີໃດ ບໍ່ມີຜ້າຮັດຖັນເຂົ້າໝູ່ບ້ານ ຕ້ອງອາບັດປາຈິດຕີ

### ເລື້ອງພິກຂຸນີອົງໜຶ່ງ ຈົບ

## ສິກຂາບົດວິພັງ

[໑໔໔໖] ຄຳວ່າ ກໍ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ກໍ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ຄຳວ່າ ບໍ່ມີຜ້າຮັດຖັນ ຄື ເວັ້ນຜ້າຮັດຖັນ

ທີ່ຊື່ວ່າ ຜ້າຮັດຖັນ ໄດ້ແກ່ ຜ້າທີ່ໃຊ້ປົກປິດອະໄວຍະວະໃຕ້ບ່າລົງມາເຖິງສາຍບື

ຄຳວ່າ ເຂົ້າໝູ່ບ້ານ ຄື ສຳລັບໝູ່ບ້ານທີ່ມີຮົ້ວລ້ອມ ຍ່າງເລີຍເຂດຮົ້ວລ້ອມ

ຕ້ອງອາບັດປາຈິດຕີ ສຳລັບໝູ່ບ້ານທີ່ບໍ່ມີຮົ້ວລ້ອມ ກ້າວພົ້ນອຸປະຈານໄປ ຕ້ອງອາບັດປາຈິດຕີ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໔໔໗] ໑. ພິກຂຸນີ ຖືກຊິງຈີວອນໄປ

໒. ພິກຂຸນີ ຈີວອນຫາຍ

໓. ພິກຂຸນີ ຜູ້ເປັນໄຂ້

໔. ພິກຂຸນີ ຜູ້ຫຼົງລືມ

໕. ພິກຂຸນີ ບໍ່ຮູ້ຕົວ

໖. ພິກຂຸນີ ວິກົນຈະລິດ

໗. ພິກຂຸນີ ຕົ້ນບັນຍັດ

### ສິກຂາບົດທີ ໑໐ ຈົບ

### ສັດຕຸປາຫະນະວັກທີ ໙ ຈົບ

## ບົດສະຫຼຸບ

ແມ່ເຈົ້າທັງຫຼາຍ ທຳຄືປາຈິດຕິ ໑໖໖ ສິກຂາບົດ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ

ຂ້າພະເຈົ້າ ຂໍຖາມແມ່ເຈົ້າທັງຫຼາຍໃນທຳຄືປາຈິດຕິ ໑໖໖ ສິກຂາບົດນັ້ນວ່າ "ທ່ານທັງຫຼາຍ ບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວບໍ?"

ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວໃນທຳຄືປາຈິດຕິທັງ ໑໖໖ ສິກຂາບົດເຫຼົ່ານີ້ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

**ຂຸດທະກະສິກຂາບົດ ຈົບບໍລິບູນ**

**ປາຈິດະຕິຍະກັນໃນພິກຂຸນີວິພັງ ຈົບ**

# ໔. ປະຕິເທສະນີຍະກັນ

ແມ່ເຈົ້າທັງຫຼາຍ ທຳຄືປະຕິເທສະນີຍະ ໘ ສິກຂາບົດເຫຼົ່ານີ້ມາເຖິງວາຣະທີ່ຈະຍົກ ຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບດັ່ງຕໍ່ໄປນີ້

## ປະຕິເທສະນີຍະສິກຂາບົດທີ ໑
## ວ່າດ້ວຍການອອກປາກຂໍເນີຍໃສ
## ເລື່ອງພິກຂຸນີສັບພັກຄີ

[໑໘໔໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸນີສັບພັກຄີອອກປາກຂໍ ເນີຍໃສມາສັນ ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງອອກປາກຂໍເນີຍໃສມາສັນ ໃຜນໍຈະບໍ່ພໍໃຈອາຫານທີ່ປຸງດີພ້ອມ ໃຜນໍຈະບໍ່ມັກຂອງແຊບ"

ພິກຂຸນີທັງຫຼາຍ ໄດ້ຍິນຄົນພວກນັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີສັບພັກຄີ ຈຶ່ງອອກປາກຂໍເນີຍໃສມາສັນນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີອອກປາກ ຂໍເນີຍໃສມາສັນ ແມ່ນບໍ?" ພິກຂຸທັງຫຼາຍ ທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງອອກປາກຂໍເນີຍໃສມາສັນນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວ ຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸນີໃດ ອອກປາກຂໍເນີຍໃສມາສັນ ພິກຂຸນີນັ້ນ ເພິ່ງສະແດງຄືນວ່າ "ແມ່ເຈົ້າຂ້ານ້ອຍຕ້ອງທຳຄືປະຕິເທສະນີຍະເປັນທຳທີ່ໜ້າຕິຕຽນ ບໍ່ເປັນສັບປາຍະ ຂ້ານ້ອຍຂໍສະແດງຄືນທຳນັ້ນ"

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸນີທັງຫຼາຍແນວນີ້

**ເລື້ອງພິກຂຸນີສັບພັກຄີ ຈົບ**

## ເລື້ອງພິກຂຸນີເປັນໄຂ້

[໑໘໘໙] ສະໄໝນັ້ນ ພິກຂຸນີທັງຫຼາຍເປັນໄຂ້ ພວກພິກຂຸນີຜູ້ຖາມອາການໄຂ້ໄດ້ກ່າວກັບພິກຂຸນີເຫຼົ່ານັ້ນດັ່ງນີ້ວ່າ “ແມ່ເຈົ້າ ພວກທ່ານຍັງສະບາຍດີຢູ່ບໍ ຍັງພໍເປັນຢູ່ໄດ້ບໍ”

ພວກພິກຂຸນີຜູ້ເປັນໄຂ້ກ່າວວ່າ “ແມ່ເຈົ້າ ເມື່ອກ່ອນພວກຂ້ານ້ອຍອອກປາກຂໍເນີຍໃສມາສັນໄດ້ ຍ້ອນເຫດນັ້ນ ພວກຂ້ານ້ອຍຈຶ່ງມີຄວາມຜາສຸກ ແຕ່ບັດນີ້ພວກຂ້ານ້ອຍຢຳເກງຢູ່ວ່າ ພຣະຜູ້ມີພຣະພາກເຈົ້າຊົງຫ້າມ ຈຶ່ງບໍ່ກ້າອອກປາກຂໍ ຍ້ອນເຫດນັ້ນຈຶ່ງບໍ່ມີຄວາມຜາສຸກ” ພິກຂຸທັງຫຼາຍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ຯລຯ

## ຊົງອະນຸຍາດເນີຍໃສ

ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີຜູ້ເປັນໄຂ້ ອອກປາກຂໍເນີຍໃສມາສັນໄດ້” ແລ້ວຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

[໑໘໓໐] ອັນໜຶ່ງ ພິກຂຸນີໃດ ຜູ້ບໍ່ເປັນໄຂ້ອອກປາກຂໍເນີຍໃສມາສັນ ພິກຂຸນີນັ້ນເພິ່ງສະແດງຄືນວ່າ “ແມ່ເຈົ້າ ຂ້ານ້ອຍຕ້ອງທຳຄືປະຕິເທສະນີຍະ ເປັນທຳທີ່ໜ້າຕິຕຽນ ບໍ່ເປັນສັບປາຍະ ຂ້ານ້ອຍຂໍສະແດງຄືນທຳນັ້ນ”

**ເລື້ອງພິກຂຸນີເປັນໄຂ້ ຈົບ**

## ສິກຂາບົດວິພັງ

[໑໘໓໑] ຄຳວ່າ ອັນໜຶ່ງ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າ ຕັດວ່າ ອັນໜຶ່ງ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຜູ້ບໍ່ເປັນໄຂ້ ຄື ຜູ້ຂາດເນີຍໃສກໍຍັງມີຄວາມຜາສຸກ

ທີ່ຊື່ວ່າ ຜູ້ເປັນໄຂ້ ຄື ຜູ້ຂາດເນີຍໃສຍ່ອມບໍ່ມີຄວາມຜາສຸກ

ທີ່ຊື່ວ່າ ເນີຍໃສ ໄດ້ແກ່ ເນີຍໃສທີ່ເກີດຈາກງົວ ເນີຍໃສຈາກແບ້ ເນີຍໃສຈາກຄວາຍ ຫຼື ເນີຍໃສຂອງສັດທີ່ມີຊີ້ນເປັນກັບປິຍະ

ພິກຂຸນີບໍ່ເປັນໄຂ້ ຂໍເພື່ອປະໂຫຍດຕົນ ຕ້ອງອາບັດທຸກກົດໃນຂະນະທີ່ຂໍ ຮັບປະເຄນມາດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັດທຸກກົດຍ້ອນໄດ້ມາ ທ່ານສັນ ຕ້ອງອາບັດ ປະຕິເທສະນີຍະທຸກ ໆ ຄໍາກືນ

## ບົດພາຊະນີ

## ຕິກະປະຕິເທສະນີຍະ

[໑໔໓໔] ບໍ່ເປັນໄຂ້ ພິກຂຸນີສໍາຄັນວ່າບໍ່ເປັນໄຂ້ ອອກປາກຂໍເນີຍໃສມາສັນ ຕ້ອງອາບັດປະຕິເທສະນີຍະ

ບໍ່ເປັນໄຂ້ ພິກຂຸນີບໍ່ແນ່ໃຈ ອອກປາກຂໍເນີຍໃສມາສັນ ຕ້ອງອາບັດປະຕິເທສະນີຍະ

ບໍ່ເປັນໄຂ້ ພິກຂຸນີສໍາຄັນວ່າເປັນໄຂ້ ອອກປາກຂໍເນີຍໃສມາສັນ ຕ້ອງອາບັດປະຕິເທສະນີຍະ

## ທຸກະທຸກກົດ

ເປັນໄຂ້ ພິກຂຸນີສໍາຄັນວ່າບໍ່ເປັນໄຂ້ ອອກປາກຂໍເນີຍໃສມາສັນ ຕ້ອງອາບັດທຸກກົດ

ເປັນໄຂ້ ພິກຂຸນີບໍ່ແນ່ໃຈ ອອກປາກຂໍເນີຍໃສມາສັນ ຕ້ອງອາບັດທຸກກົດ

ເປັນໄຂ້ ພິກຂຸນີສໍາຄັນວ່າເປັນໄຂ້ ອອກປາກຂໍເນີຍໃສມາສັນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໔໓໓] ໑. ພິກຂຸນີ ຜູ້ເປັນໄຂ້

໒. ພິກຂຸນີ ເປັນໄຂ້ ອອກປາກຂໍມາ ຫາຍແລ້ວສັນ

໓. ພິກຂຸນີ ສັນເນີຍໃສທີ່ເຫຼືອເຫຼືອນຂອງພິກຂຸນີຜູ້ເປັນໄຂ້

໔. ພິກຂຸນີ ສັນເນີຍໃສຂອງຍາດ

໕. ພິກຂຸນີ ສັນເນີຍໃສຂອງຄົນທີ່ປະວາຣະນາໄວ້

໖. ພິກຂຸນີ ອອກປາກຂໍເພື່ອຜູ້ອື່ນ

໗. ພິກຂຸນີ ຈ່າຍມາດ້ວຍຊັບຂອງຕົນ

໘. ພິກຂຸນີ ວິກົນຈະລິດ

໙. ພິກຂຸນີ ຕົ້ນບັນຍັດ

**ປະຕິເທສະນີຍະສິກຂາບົດທີ ໑ ຈົບ**

# ປະຕິເທສະນີຍະສິກຂາບົດທີ ໔-໗
# ວ່າດ້ວຍການອອກປາກຂໍນ້ຳມັນເປັນຕົ້ນ
# ເລື້ອງພິກຂຸນີສັບພັກຄີ

[໑໔໓໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີສັບພັກຄີ (ອອກປາກຂໍນ້ຳມັນມາສັນ ຯລຯ ອອກປາກຂໍນ້ຳເຜີ້ງມາສັນ ຯລຯ ອອກປາກຂໍນ້ຳອ້ອຍມາສັນ ຯລຯ ອອກປາກຂໍປາມາສັນ ຯລຯ ອອກປາກຂໍຊີ້ນມາສັນ ຯລຯ ອອກປາກຂໍນົມສົດມາສັນ ຯລຯ) ອອກປາກຂໍນົມສົ້ມມາສັນ ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີຈຶ່ງອອກປາກຂໍນົມສົ້ມມາສັນບໍ ໃຜບໍຈະບໍ່ພໍໃຈອາຫານທີ່ປຸງດີພ້ອມ ໃຜບໍຈະບໍ່ພໍໃຈຂອງທີ່ແຊບ"

ພິກຂຸນີທັງຫຼາຍ ໄດ້ຍິນຄົນພວກນັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງ ອອກປາກຂໍນົມສົ້ມມາສັນບໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີອອກປາກ ຂໍນົມສົ້ມມາສັນ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງຂໍນົມສົ້ມມາສັນບໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ກໍ ພິກຂຸນີໃດ ອອກປາກຂໍນົມສົ້ມມາສັນ ພິກຂຸນີນັ້ນ ເພິ່ງສະແດງຄືນວ່າ "ແມ່ເຈົ້າ ຂ້ານ້ອຍຕ້ອງທຳຄືປະຕິເທສະນີຍະ ເປັນທຳທີ່ໜ້າຕິຕຽນ ບໍ່ເປັນສັບປາຍະ ຂ້ານ້ອຍຂໍສະແດງຄືນທຳນັ້ນ"

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸນີທັງຫຼາຍແນວນີ້

**ເລື້ອງພິກຂຸນີສັບພັກຄີ ຈົບ**

# ເລື້ອງພິກຂຸນີເປັນໄຂ້

[໑໔໓໕] ສະໄໝນັ້ນ ພິກຂຸນີທັງຫຼາຍເປັນໄຂ້ ພິກຂຸນີ ຜູ້ຖາມອາການໄຂ້ໄດ້ກ່າວກັບພິກຂຸນີເຫຼົ່ານັ້ນດັ່ງນີ້ວ່າ "ແມ່ເຈົ້າ ພວກທ່ານຍັງສະບາຍດີຢູ່ບໍ ຍັງພໍເປັນຢູ່ໄດ້ບໍ"

ພິກຂຸນີຜູ້ເປັນໄຂ້ກ່າວວ່າ "ແມ່ເຈົ້າ ເມື່ອກ່ອນພວກຂ້ານ້ອຍອອກປາກຂໍນົມສົ້ມມາສັນໄດ້ ຍ້ອນເຫດນັ້ນພວກຂ້ານ້ອຍຈຶ່ງມີຄວາມຜາສຸກ ແຕ່ບັດນີ້ພວກຂ້ານ້ອຍຢຳເກງຢູ່ວ່າ

ພຣະຜູ້ມີພຣະພາກເຈົ້າຊົງຫ້າມ ຈຶ່ງບໍ່ກ້າອອກປາກຂໍ ຍ້ອນເຫດນັ້ນຈຶ່ງບໍ່ມີຄວາມຜາສຸກ" ພວກພິກຂຸໄດ້ຂາບທູນເລື້ອງນີ້ ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ ຯລຯ

# ຊົງອະນຸຍາດນົມສົ້ມ

ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີເປັນໄຂ້ອອກປາກຂໍນົມສົ້ມມາສັນໄດ້" ແລ້ວຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

# ພຣະອະນຸບັນຍັດ

[໑໔໓໖] ອັນໜຶ່ງ ພິກຂຸນີໃດຜູ້ບໍ່ເປັນໄຂ້ອອກປາກຂໍ (ນ້ຳມັນ ຯລຯ ນ້ຳເຜີ້ງ ຯລຯ ນ້ຳອ້ອຍ ຯລຯ ປາ ຯລຯ ຊີ້ນ ຯລຯ ນົມສົດ ຯລຯ) ນົມສົ້ມມາສັນ ພິກຂຸນີນັ້ນ ເພິ່ງສະແດງຄືນວ່າ "ແມ່ເຈົ້າ ຂ້ານ້ອຍຕ້ອງທຳຄືປະຕິເທສະນີຍະ ເປັນທຳທີ່ໜ້າຕິຕຽນ ບໍ່ເປັນສັບປາຍະ ຂ້ານ້ອຍຂໍສະແດງຄືນທຳນັ້ນ"

### ເລື້ອງພິກຂຸນີເປັນໄຂ້ ຈົບ

# ສິກຂາບົດວິພັງ

[໑໔໓໗] ຄຳວ່າ ອັນໜຶ່ງ ຯລຯ ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອັນໜຶ່ງ ຯລຯ ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ຍ້ອນເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຜູ້ບໍ່ເປັນໄຂ້ ຄື ຜູ້ຂາດນົມສົ້ມກໍຍັງມີຄວາມຜາສຸກ

ທີ່ຊື່ວ່າ ຜູ້ເປັນໄຂ້ ຄື ຜູ້ຂາດນົມສົ້ມຍ່ອມບໍ່ມີຄວາມຜາສຸກ

ທີ່ຊື່ວ່າ ນ້ຳມັນ ໄດ້ແກ່ ນ້ຳມັນທີ່ສະກັດຈາກເມັດງາ ນ້ຳມັນຈາກເມັດຜັກກາດ ນ້ຳມັນຈາກເມັດໝາກຊາງ ນ້ຳມັນຈາກເມັດຫຸ່ງສາ ນ້ຳມັນຈາກສັດ

ທີ່ຊື່ວ່າ ນ້ຳເຜີ້ງ ໄດ້ແກ່ ນ້ຳຫວານທີ່ເຜິ້ງເຮັດ

ທີ່ຊື່ວ່າ ນໍ້າອ້ອຍ ໄດ້ແກ່ ນໍ້າຫວານທີ່ເກີດຈາກອ້ອຍ

ທີ່ຊື່ວ່າ ປາ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງສັດທີ່ເກີດໃນນໍ້າ

ທີ່ຊື່ວ່າ ຊີ້ນ ໄດ້ແກ່ ຊີ້ນຂອງສັດທີ່ມີມັງສະເປັນກັບປິຍະ

ທີ່ຊື່ວ່າ ນົມສົດ ໄດ້ແກ່ ນໍ້ານົມງົວ ນໍ້ານົມແບ້ ນໍ້ານົມຄວາຍ ຫຼື ນໍ້ານົມສັດ ທີ່ມີມັງສະເປັນກັບປິຍະ

ທີ່ຊື່ວ່າ ນົມສົ້ມ ໄດ້ແກ່ ນົມສົ້ມຂອງສັດມີງົວເປັນຕົ້ນເຫຼົ່ານັ້ນ

ພິກຂຸນີບໍ່ເປັນໄຂ້ ຂໍມາເພື່ອຕົນ ຕ້ອງອາບັດທຸກກົດໃນຂະນະທີ່ຂໍ ຮັບປະເຄນໄວ້ດ້ວຍຕັ້ງໃຈວ່າ "ຈັກສັນ" ຕ້ອງອາບັດທຸກກົດຍ້ອນໄດ້ມາ ທ່ານສັນຕ້ອງອາບັດປະຕິເທສະນີຍະ ທຸກໆ ຄໍາກືນ

## ບົດພາຊະນີ

## ຕິກະປະຕິເທສະນີຍະ

[໑໘໓໗] ບໍ່ເປັນໄຂ້ ພິກຂຸນີສໍາຄັນວ່າບໍ່ເປັນໄຂ້ ອອກປາກຂໍນົມສົ້ມມາສັນ ຕ້ອງອາບັດປະຕິເທສະນີຍະ

ບໍ່ເປັນໄຂ້ ພິກຂຸນີບໍ່ແນ່ໃຈ ອອກປາກຂໍນົມສົ້ມມາສັນ ຕ້ອງອາບັດປະຕິເທສະນີຍະ

ບໍ່ເປັນໄຂ້ ພິກຂຸນີສໍາຄັນວ່າເປັນໄຂ້ອອກປາກຂໍນົມສົ້ມມາສັນ ຕ້ອງອາບັດປະຕິເທສະນີຍະ

## ທຸກະທຸກກົດ

ເປັນໄຂ້ ພິກຂຸນີສໍາຄັນວ່າບໍ່ເປັນໄຂ້ ອອກປາກຂໍນົມສົ້ມມາສັນ ຕ້ອງອາບັດທຸກກົດ

ເປັນໄຂ້ ພິກຂຸນີບໍ່ແນ່ໃຈ ອອກປາກຂໍນົມສົ້ມມາສັນ ຕ້ອງອາບັດທຸກກົດ

ເປັນໄຂ້ ພິກຂຸນີສໍາຄັນວ່າເປັນໄຂ້ ອອກປາກຂໍນົມສົ້ມມາສັນ ບໍ່ຕ້ອງອາບັດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ ບໍ່ຕ້ອງອາບັດ ຄື

[໑໘໓໙] ໑. ພິກຂຸນີ ຜູ້ເປັນໄຂ້

໒. ພິກຂຸນີ ຂໍໄດ້ມາເມື່ອຕອນເປັນໄຂ້ ສັນເມື່ອບໍ່ເປັນໄຂ້

໓. ພິກຂຸນີ ສັນນົມສົ້ມທີ່ເຫຼືອເງື່ອນຂອງພິກຂຸນີໄຂ້

໔. ພິກຂຸນີ ສັນນົມສົ້ມຂອງຍາດ

໕. ພິກຂຸນີ ສັນນົມສົ້ມຂອງຄົນທີ່ປະວາຣະນາໄວ້

໖. ພິກຂຸນີ ອອກປາກຂໍເພື່ອຜູ້ອື່ນ

ໆ. ພິກຂຸນີ ຈ່າຍມາດ້ວຍຊັບຂອງຕົນ
໗. ພິກຂຸນີ ວິກົນຈະລິດ
໘. ພິກຂຸນີ ຕົ້ນບັນຍັດ

**ປະຕິເທສະນີຍະສິກຂາບົດທີ ໗ ຈົບ**

## ບົດສະຫຼຸບ

ແມ່ເຈົ້າທັງຫຼາຍ ທຳຄືປະຕິເທສະນີຍະ ໗ ສິກຂາບົດ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ

ຂ້າພະເຈົ້າຂໍຖາມແມ່ເຈົ້າທັງຫຼາຍໃນທຳຄືປະຕິເທສະນີຍະ ໗ ສິກຂາບົດເຫຼົ່ານັ້ນວ່າ "ທ່ານທັງຫຼາຍ ບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວບໍ?" .

ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວໃນທຳຄືປະຕິເທສະນີຍະທັງ ໗ ສິກຂາບົດເຫຼົ່ານີ້ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນ ເປັນມະຕິແນວນີ້

**ປະຕິເທສະນີຍະກັນໃນພິກຂຸນີວິພັງ ຈົບ**

# ຝ. ເສຂິຍະກັນ

ແມ່ເຈົ້າທັງຫຼາຍ ທຳຄືເສຂິຍະເຫຼົ່ານີ້ ມາເຖິງວາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບ ດັ່ງຕໍ່ໄປນີ້

## ໑. ປະຣິມັນທະລະວັກ

## ໝວດວ່າດ້ວຍການນຸ່ງຫົ່ມຮຽບຮ້ອຍ

### ສິກຂາບົດທີ ໑

### ເລື້ອງພິກຂຸນີສັບພັກຄີ

[໑໒໔໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີສັບພັກຄີຄອງອັນຕະຣະວາສົກຍ້ອຍຂ້າງໜ້າແດ່ ຂ້າງຫຼັງແດ່ ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນ

ຫຍັງ ພວກພິກຂຸນີທັງຫຼາຍ ຈຶ່ງຄອງອັນຕະຣະວາສົກຍ້ອຍຂ້າງໜ້າແດ່ ຂ້າງຫຼັງແດ່ເໝືອນແມ່ຍິງຄະລຶຫັດຜູ້ບໍຣິໂພກກາມນໍ"

ພິກຂຸນີທັງຫຼາຍ ໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນີສັບພັກຄີ ຈຶ່ງຄອງອັນຕະຣະວາສົກຍ້ອຍຂ້າງໜ້າແດ່ ຍ້ອຍຂ້າງຫຼັງແດ່ນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີຄອງອັນຕະຣະວາສົກຍ້ອຍຂ້າງໜ້າແດ່ ຂ້າງຫຼັງແດ່ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງຄອງອັນຕະຣະວາສົກຍ້ອຍຂ້າງໜ້າແດ່ ຂ້າງຫຼັງແດ່ນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ເພິ່ງທຳການສຶກສາວ່າ ເຮົາຈັກຄອງອັນຕະຣະວາສົກໃຫ້ຮຽບຮ້ອຍ

### ເລື້ອງພິກຂຸນີສັບພັກຄີ ຈົບ

## ສິກຂາບົດວິພັງ

ພິກຂຸນີ ເພິ່ງຄອງອັນຕະຣະວາສົກໃຫ້ຮຽບຮ້ອຍ ຄືນຸ່ງປິດບໍລິເວນສາຍບື ບໍລິເວນເຂົ່າ ພິກຂຸນີໃດບໍ່ເອື້ອເຟື້ອ ຄອງອັນຕະຣະວາສົກຍ້ອຍຂ້າງໜ້າຫຼືຂ້າງຫຼັງ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸນີ ບໍ່ຈົງໃຈ
໒. ພິກຂຸນີ ບໍ່ມີສະຕິ
໓. ພິກຂຸນີ ຜູ້ບໍ່ຮູ້

໔. ພິກຂຸນີ ຜູ້ເປັນໄຂ້
໕. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໖. ພິກຂຸນີ ວິກົນຈະລິດ
໗. ພິກຂຸນີ ຕົ້ນບັນຍັດ

**ປະຣິມັນທະລະວັກຈົບ**

# ໗. ປາທຸກາວັກ

## ໝວດວ່າດ້ວຍເກີບ

### ສິກຂາບົດທີ ໑

### ເລື້ອງພິກຂຸນີສັບພັກຄີ

[໑໘໔໑] ສະໄໝນັ້ນພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນີສັບພັກຄີຖ່າຍອຸດຈາຣະແດ່ ປັດສາວະແດ່ ບ້ວນນ້ຳລາຍແດ່ ລົງໃນນ້ຳ ພວກຊາວບ້ານຈຶ່ງຕຳໜິ ປະນາມໂພນທະນາວ່າ "ເປັນຫຍັງ ພິກຂຸນີທັງຫຼາຍ ຈຶ່ງຖ່າຍອຸດຈາຣະແດ່ ປັດສາວະແດ່ ບ້ວນນ້ຳລາຍແດ່ ລົງໃນນ້ຳເໝືອນແມ່ຍິງຄະລິຫັດຜູ້ບໍຣິໂພກກາມນໍ"

ພິກຂຸນີທັງຫຼາຍ ໄດ້ຍິນພວກຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີ ຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸນີສັບພັກຄີ ຈຶ່ງຖ່າຍອຸດຈາຣະແດ່ ປັດສາວະແດ່ ບ້ວນນ້ຳລາຍແດ່ ລົງໃນນ້ຳນໍ" ເມື່ອແລ້ວ ພິກຂຸນີເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປບອກໃຫ້ພິກຂຸທັງຫຼາຍໃຫ້ຮູ້ ພວກພິກຂຸຈຶ່ງນຳເລື້ອງນີ້ໄປ ຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງປະຊຸມສົງບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນີສັບພັກຄີຖ່າຍ ອຸດຈາຣະແດ່ ປັດສາວະແດ່ ບ້ວນນ້ຳລາຍແດ່ ລົງໃນນ້ຳ ແມ່ນບໍ?" ພິກຂຸທັງຫຼາຍທູນຮັບວ່າ "ແມ່ນ ຂ້ານ້ອຍ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ພວກພິກຂຸນີສັບພັກຄີຈຶ່ງຖ່າຍອຸດຈາຣະແດ່ ປັດສາວະແດ່ ບ້ວນນ້ຳລາຍແດ່ ລົງໃນນ້ຳນໍ ພິກຂຸທັງຫຼາຍ ການກະທຳແນວ

ນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫຼາຍ ຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

ເພິ່ງທຳການສິກສາວ່າ ເຮົາຈັກບໍ່ຖ່າຍອຸດຈາຣະ ປັດສາວະຫຼືບ້ວນນ້ຳລາຍລົງໃນນ້ຳ

ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ແລ້ວ ແກ່ພິກຂຸນີທັງຫຼາຍແນວນີ້

### ເລື້ອງພິກຂຸນີສັບພັກຄີ ຈົບ

## ເລື້ອງພິກຂຸນີເປັນໄຂ້

ສະໄໝນັ້ນ ພິກຂຸນີທັງຫຼາຍຜູ້ເປັນໄຂ້ ຍຳເກງຢູ່ທີ່ຈະຖ່າຍອຸດຈາຣະແດ່ ປັດສາວະແດ່ ບ້ວນນ້ຳລາຍແດ່ ລົງໃນນ້ຳ ພວກພິກຂຸໄດ້ຂາບທູນເລື້ອງນັ້ນ ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຮູ້ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນີຜູ້ເປັນໄຂ້ຖ່າຍອຸດຈາຣະແດ່ ປັດສາວະແດ່ ບ້ວນນ້ຳລາຍແດ່ ລົງໃນນ້ຳໄດ້” ແລ້ວຮັບສັ່ງໃຫ້ພິກຂຸນີທັງຫຼາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະອະນຸບັນຍັດ

ເພິ່ງກະທຳການສິກສາວ່າ ເຮົາບໍ່ເປັນໄຂ້ ຈັກບໍ່ຖ່າຍອຸດຈາຣະ ປັດສາວະ ຫຼື ບ້ວນນ້ຳລາຍລົງໃນນ້ຳ

### ເລື້ອງພິກຂຸນີເປັນໄຂ້ ຈົບ

## ສິກຂາບົດວິພັງ

ພິກຂຸນີບໍ່ເປັນໄຂ້ ບໍ່ເພິ່ງຖ່າຍອຸດຈາຣະ ປັດສາວະ ຫຼື ບ້ວນນ້ຳລາຍລົງໃນນ້ຳ

ພິກຂຸນີໃດບໍ່ເອື້ອເຟື້ອ ບໍ່ເປັນໄຂ້ ຖ່າຍອຸດຈາຣະ ປັດສາວະ ຫຼື ບ້ວນນ້ຳລາຍ ລົງໃນນ້ຳ ຕ້ອງອາບັດທຸກກົດ

## ອະນາປັດຕິວານ

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

໑. ພິກຂຸນີ ບໍ່ຈົງໃຈ
໔. ພິກຂຸນີ ບໍ່ມີສະຕິ

໓. ພິກຂຸນີ ຜູ້ບໍ່ຮູ້
໔. ພິກຂຸນີ ຜູ້ເປັນໄຂ້
໕. ພິກຂຸນີ ຖ່າຍເທິງບົກແລ້ວໄຫຼລົງນໍ້າ
໖. ພິກຂຸນີ ຜູ້ມີເຫດຂັດຂ້ອງ
໗. ພິກຂຸນີ ວິກົນຈະລິດ
໘. ພິກຂຸນີ ມີຈິດຟຸ້ງຊ່ານ
໙. ພິກຂຸນີ ກະສັບກະສ່າຍຍ້ອນເວທະນາ
໑໐. ພິກຂຸນີ ຕົ້ນບັນຍັດ

**ສິກຂາບົດທີ ໑໕ ຈົບ**

**ປາທຸກາວັກທີ ໗ ຈົບ**

## ບົດສະຫຼຸບ

ແມ່ເຈົ້າທັງຫຼາຍ ທຳຄືເສຂິຍະທັງຫຼາຍ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ

ຂ້າພະເຈົ້າຂໍຖາມແມ່ເຈົ້າທັງຫຼາຍ ໃນທຳຄືເສຂິຍະເຫຼົ່ານັ້ນວ່າ "ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວບໍ?"

ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວໃນທຳຄືເສຂິຍະເຫຼົ່ານີ້ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນໄວ້ເປັນມະຕິແນວນີ້

**ເສຂິຍະກັນ ຈົບ**

# ໗. ອະທິກະຣະນະສະມະຖະ

ແມ່ເຈົ້າທັງຫຼາຍ ທຳຄືອະທິກະຣະນະສະມະຖະ ໗ ເຫຼົ່ານີ້ມາເຖິງວາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບ

[໑໒໘໒] ເພື່ອລະງັບອະທິກອນທີ່ເກີດຂຶ້ນແລ້ວ ໆ (໑) ເພິ່ງໃຫ້ສຳມຸຂາວິໄນ (໒) ເພິ່ງໃຫ້ສະຕິວິໄນ (໓) ເພິ່ງໃຫ້ອະມູນະຫະວິໄນ (໔) ເພິ່ງໃຫ້ປະຕິນຍາຕະກະຣະນະ (໕) ເພິ່ງໃຫ້ເຍພຸຍຍະຊິກາ (໖) ເພິ່ງໃຫ້ຕັດສະປາປິຍະສິກາ (໗) ເພິ່ງໃຫ້ຕິນະວັດຖານະກະວິໄນ

## ບົດສະຫຼຸບ

ແມ່ເຈົ້າທັງຫຼາຍ ທຳຄືອະທິກະຣະນະສະມະຖະ ໗ ຢ່າງ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ

ຂ້າພະເຈົ້າຂໍຖາມແມ່ເຈົ້າທັງຫຼາຍໃນທຳ ຄື ອະທິກະຣະນະສະມະຖະເຫຼົ່ານັ້ນວ່າ "ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວບໍ?"

ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ແມ່ເຈົ້າທັງຫຼາຍ ບໍລິສຸດແລ້ວບໍ?"

ແມ່ເຈົ້າທັງຫຼາຍບໍລິສຸດແລ້ວໃນທຳຄືອະທິກະຣະນະສະມະຖະ ໗ ເຫຼົ່ານີ້ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນ ເປັນມະຕິແນວນີ້

**ອະທິກະຣະນະສະມະນະ ຈົບ**

## ຄຳນິຄົມ

ແມ່ເຈົ້າທັງຫຼາຍ ນິທານ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ

| | | |
|---|---|---|
| ທຳ ຄື ປາຣາຊິກ | ໘ ສິກຂາບົດ | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |
| ທຳ ຄື ສັງຄາທິເສດ | ໑໗ ສິກຂາບົດ | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |
| ທຳ ຄື ນິດສັກຄິຍະປາຈິດຕີ | ໓໐ ສິກຂາບົດ | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |
| ທຳ ຄື ປາຈິດຕີ | ໑໖໖ ສິກຂາບົດ | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |
| ທຳ ຄື ປະຕິເທສະນີຍະ | ໘ ສິກຂາບົດ | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |
| ທຳ ຄື ເສຂິຍະທັງຫຼາຍ | | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |
| ທຳ ຄື ອະທິກະຣະນະສະມະຖະ ໗ | | ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ |

ສິກຂາບົດຂອງພຣະຜູ້ມີພຣະພາກເຈົ້ານັ້ນມີເທົ່ານີ້ ມາໃນສູດ ນັບເນື່ອງໃນພຣະສູດ ມາສູ່ວາຣະທີ່ຈະເພິ່ງຍົກຂຶ້ນສະແດງເປັນຂໍ້ ໆ ຕາມລຳດັບທຸກ ໆ ເຄິ່ງເດືອນ ພວກເຮົາທັງຫຼາຍເພິ່ງພ້ອມພຽງກັນ ຮ່ວມໃຈກັນ ບໍ່ວິວາດກັນ ສຶກສາໃນພຣະສູດນັ້ນ ໆ ເທີ້ນ

**ພິກຂຸນີວິພັງ ຈົບ**